16-4-87



ວາລະສານ

# ອະລຸນໃໝ່

ປີທີສອງ

4

2-1986

ອົງການທິດສະດີ ແລະ ການເມືອງ
ຂອງພັກປະຊາຊົນປະຕິວັດລາວ

# ບົດນຳ

## ທົ່ວພັກ, ທົ່ວປວງຊົນເຮົາ ຕັດສິນໃຈອອກແຮງ ປະຕິບັດມະຕິກອງປະຊຸມໃຫຍ່ ຄັ້ງທີ IV ຂອງພັກ ໃຫ້ສຳເລັດຜົນ

ກອງປະຊຸມໃຫຍ່ຄັ້ງທີ _IV_ ຂອງພັກປະຊາຊົນປະຕິວັດລາວ ແມ່ນເຫດການ ປະຫວັດສາດອັນຍິ່ງໃຫຍ່ ໃນຊີວິດການເມືອງຂອງພັກ ແລະ ປະຊາຊົນເຮົາ. ໄຊຊະນະອັນສະຫງ່າງາມຂອງກອງປະຊຸມໄດ້ເປັນຂີດໝາຍແຫ່ງບາດກ້າວຂະຫຍາຍຕົວໃໝ່ ທີ່ໃຫຍ່ຫລວງຂອງການປະຕິວັດຢູ່ປະເທດເຮົາ ແລະເປັນຂີດໝາຍແຫ່ງຄວາມເຕີບໃຫຍ່ເຂັ້ມແຂງ ຂອງພັກເຮົາ. ບັນດາມະຕິຂອງກອງປະຊຸມໃຫຍ່ ແມ່ນການສະແດງເຖິງປັນຍາຄວາມຮູ້ ຂອງພັກເຮົາ ໃນການສືບຕໍ່ຫມູນໃຊ້ບັນດາຫລັກການ ທີ່ມີລັກສະນະທົ່ວໄປຂອງລັດທິ ມາກ -ເລນິນເຂົ້າໃນພາລະກິດກໍ່ສ້າງລັດທິສັງຄົມນິຍົມຢູ່ປະເທດເຮົາ ກໍຄືການນຳໃຊ້ບັນດາບົດຮຽນ ທີ່ຖອດມາໄດ້ຈາກພຶດຕິກຳແຫ່ງການປົກປັກຮັກສາປະເທດຊາດແລະກໍ່ສ້າງສັງຄົມນິຍົມໃນ 10 ປີຜ່ານມາ.ນັ້ນແມ່ນເຂັມຊີ້ທິດ, ແມ່ນແສງສະຫວ່າງເຍືອງທາງໃຫ້ພັກເຮົາ, ໃຫ້ປະຊາຊົນບັນດາເຜົ່າເຮົາ ສືບຕໍ່ກ້າວຂຶ້ນຍາດເອົາໄຊຊະນະໃຫມ່ທີ່ໃຫຍ່ຫລວງໃນຊຸມປີຂ້າງຫນ້າ .

*

*   *

ບົນພື້ນຖານໄຈ້ແຍກ ສະພາວະແຫ່ງຄວາມເປັນຈິງ ກ່ຽວກັບເສດຖະກິດ-ສັງຄົມ ຂອງປະເທດເຮົາ ໃນປັດຈຸບັນຢ່າງເລິກເຊິ່ງ ກອງປະຊຸມໃຫຍ່ໄດ້ວາງບັນດາທິດທາງແລະຫນ້າທີ່ພື້ນຖານຕໍ່ຂອງຕະຫລອດສະໄຫມຂ້າມຜ່ານ ກ້າວຂຶ້ນສັງຄົມນິຍົມຢູ່ປະເທດເຮົາ, ວາງທິດທາງແລະ ຫນ້າທີ່ຂະຫຍາຍເສດຖະກິດ-ສັງຄົມ ແຕ່ນີ້ເຖິງປີ 2000 ແລະແຜນການ 5ປີເທື່ອທີ






ພະອາຈານ ສຸບິນ ສິດທິຈຸດາວົງ

16-4

II ( 1986-1990), ພ້ອມນັ້ນກໍ່ໄດ້ເນັ້ນໜັກບັນດາທັດສະນະພື້ນຖານກ່ຽວກັບ ການປ່ຽນແປງລະບົບກົນໄກຄຸ້ມຄອງເສດຖະກິດໃໝ່. ກອງປະຊຸມໃຫຍ່ໄດ້ຕົກລົງບັນຫາກ່ຽວກັບທິດທາງ ແລະໜ້າທີ່ປ້ອງກັນຊາດ, ປ້ອງກັນຄວາມສະຫງົບ, ກ່ຽວກັບນະໂຍບາຍຕ່າງປະເທດຂອງພັກ ແລະລັດເຮົາ; ກອງປະຊຸມໃຫຍ່ຍັງໄດ້ຕົກລົງບັນຫາທີ່ສຳຄັນ ກ່ຽວກັບ ວຽກງານກໍ່ສ້າງພັກ ເພື່ອແນໃສ່ຮັບປະກັນໃຫ້ການປະຕິບັດບັນດາໜ້າທີ່ດັ່ງກ່າວນັ້ນໄດ້ ສຳເລັດຜົນ.

ບັນຫາທີ່ມີຄວາມໝາຍຕັດສິນ ໄດ້ຕັ້ງຂຶ້ນໃນປັດຈຸບັນນີ້ ແມ່ນບັນດາການຈັດຕັ້ງພັກຢູ່ແຕ່ລະຂະແໜງການ, ແຕ່ລະຂັ້ນ ມີໜ້າທີ່ຈັດຕັ້ງເຜີຍແຜ່ໃຫ້ພະນັກງານ, ສະມາຊິກພັກແລະປະຊາຊົນບັນດາເຜົ່າໄດ້ເຂົ້າໃຈເນື້ອໃນມະຕິຂອງກອງປະຊຸມໃຫຍ່ຢ່າງເລິກເຊິ່ງ ແລະຍຶນພື້ນຖານອັນນັ້ນເພື່ອກໍ່ສ້າງໂຄງການ, ແຜນການ, ຈຸດໝາຍ, ວິທີການປະຕິບັດບັນດາມະຕິຂອງກອງປະຊຸມໃຫຍ່ຢ່າງຕັ້ງໜ້າທີ່ສຸດ. ຢູ່ໃນນີ້ ພຽງແຕ່ຈະເນັ້ນໜັກໃຫ້ເຫັນເຖິງບາງຈຸດທີ່ເປັນພື້ນຖານ ເພື່ອຊ່ວຍໃນການຄົ້ນຄ້ວາຊອກຮູ້ເນື້ອໃນ ຂອງບັນດາມະຕິຂອງກອງປະຊຸມໃຫຍ່ເທົ່ານັ້ນ .

ກ່ອນອື່ນ ແມ່ນເວົ້າເຖິງ ທິດທາງ ແລະໜ້າທີ່ເສດຖະກິດ - ສັງຄົມ .

ດັ່ງທີ່ພວກເຮົາໄດ້ຮູ້ ການປະຕິວັດສັງຄົມ ແມ່ນການປະຕິວັດທີ່ຍິ່ງໃຫຍ່ທີ່ສຸດ, ເລິກເຊິ່ງ ແລະ ເຖິງຖອງທີ່ສຸດໃນປະຫວັດສາດ. ໃນໄລຍະຂ້າມຜ່ານກ້າວຂຶ້ນສັງຄົມນິຍົມຢູ່ ປະເທດເຮົາ ແມ່ນຕ້ອງໄດ້ກໍ່ສ້າງຮາກຖານຂອງລັດທິສັງຄົມນິຍົມ ໃນທຸກດ້ານ: ເສດຖະກິດ, ສັງຄົມ, ການເມືອງ' ວັດທະນະທຳ, ແນວຄິດ, ແນໃສ່ຫັນສັງຄົມເກົ່າທີ່ຫລ້າຫລັງໃຫ້ ເປັນສັງຄົມໃໝ່ ສັງຄົມນິຍົມ. ເພື່ອປະຕິບັດໜ້າທີ່ດັ່ງກ່າວນັ້ນ ພວກເຮົາຕ້ອງຮູ້ໝູນໃຊ້ ຢ່າງປະດິດສ້າງບັນດາກົດເກນທີ່ມີລັກສະນະທົ່ວໄປຂອງວຽກງານກໍ່ສ້າງສັງຄົມ ເຂົ້າໃນສະພາບແວດລ້ອມຕົວຈິງຂອງປະເທດເຮົາ.

ແນວທາງລວມໃນໄລຍະຂ້າມຜ່ານ ເຊິ່ງກອງປະຊຸມໃຫຍ່ຄັ້ງທີ III ຂອງພັກວາງອອກນັ້ນ ແມ່ນການໝູນໃຊ້ບັນດາກົດເກນດັ່ງກ່າວຢ່າງປະດິດສ້າງ ຜົນສຳເລັດຕ່າງໆທາງດ້ານການກໍ່ສ້າງສັງຄົມນິຍົມ ກໍ່ຄືການປົກປັກຮັກສາປະເທດຊາດຂອງປະຊາຊົນເຮົາ ໃນຊຸມ ປີຜ່ານມາ ໄດ້ຢັ້ງຢືນໃຫ້ເຫັນແນວທາງທີ່ກອງປະຊຸມໃຫຍ່ຄັ້ງທີ III ຂອງພັກ ແລະບັນດາມະຕິຂອງຄະນະກຳມະການສູນກາງພັກວາງອອກ ແມ່ນຖືກຕ້ອງທີ່ສຸດ. ບົນພື້ນຖານ ການໃຈ້ແຍກສະພາວະແຫ່ງຄວາມເປັນຈິງ ກ່ຽວກັບເສດຖະກິດ-ສັງຄົມໃນປັດຈຸບັນ ຂອງ ປະເທດ

ເຮົາ ກອງປະຊຸມໃຫຍ່ຄັ້ງນີ້ ໄດ້ເຮັດໃຫ້ບັນດາທິດທາງ ແລະ ໜ້າທີ່ເສດຖະກິດ- ສັງຄົມ ສົມບູນ ແລະ ລະອຽດຕື່ມ ດັ່ງນີ້:

- ອັນທີໜຶ່ງ: ດຳເນີນການຫັນເປັນອຸດສາຫະກຳສັງຄົມນິຍົມເທື່ອລະກ້າວ ເພື່ອ ກໍ່ສ້າງຮາກຖານວັດຖຸ-ເຕັກນິກຂອງສັງຄົມນິຍົມໃຫ້ສຳເລັດຜົນ.

- ອັນທີສອງ: ດຳເນີນການດັດສ້າງສັງຄົມ ແນໃສ່ກໍ່ສ້າງການພົວພັນການຜະລິດໃໝ່ສັງຄົມນິຍົມ .

- ອັນທີສາມ: ຂະຫຍາຍຈຳນວນ ແລະ ຍົກລະດັບຄຸນນະພາບຂອງຊົນຊັ້ນກຳມະກອນ, ເຮັດໃຫ້ຊົນຊັ້ນຊາວນາລວມໝູ່ ແລະ ຊັ້ນຄົນປັນຍາຊົນສັງຄົມນິຍົມເປັນຕົວເປັນຕົນຂຶ້ນ.

- ອັນທີສີ່: ປັບປຸງ ພະເດັດການກຳມາຊີບໃຫ້ໜັກແໜ້ນ, ເປີດກ້ວາງປະຊາທິປະໄຕສັງຄົມນິຍົມ, ເພີ່ມທະວີຄວາມເປັນເອກະພາບທາງດ້ານການເມືອງ ແລະແນວຄິດຂອງສັງຄົມ.

- ອັນທີຫ້າ: ດຳເນີນການປະຕິວັດທາງດ້ານແນວຄິດ ແລະ ວັດທະນະທຳແນໃສ່ ກໍ່ສ້າງວັດທະນະທຳໃໝ່ ແລະ ຄົນໃໝ່ສັງຄົມນິຍົມ ຂຶ້ນເທື່ອລະກ້າວ.

- ອັນທີຫົກ: ປົວແປງຊີວິດການເປັນຢູ່ຂອງປະຊາຊົນຜູ້ອອກແຮງງານເຜົ່າຕ່າງໆໃຫ້ດີຂຶ້ນຢ່າງເຕີມຈັດ ແລະ ແກ້ໄຂບັນດາບັນຫາສັງຄົມຢ່າງເໝາະສົມ.

- ອັນທີເຈັດ: ກໍ່ສ້າງລະບົບຄຸ້ມຄອງໃໝ່ ຕໍ່ພູກຂຶ້ງເຂດເຄື່ອນໄຫວຂອງສັງຄົມ .

ພວກເຮົາຕ້ອງປະຕິບັດບັນດາທິດທາງ ແລະ ໜ້າທີ່ເຫຼົ່ານີ້ໄປພ້ອມກັນ ຈະຖືເບົາໜ້າທີ່ໃດໜຶ່ງ ແມ່ນບໍ່ໄດ້. ການປະຕິບັດບັນດາທິດທາງໜ້າທີ່ດັ່ງກ່າວໄປພ້ອມໆກັນນັ້ນມີຄວາມໝາຍວ່າ ພວກເຮົາປະຕິບັດສອງໜ້າທີ່ຍຸດທະສາດ ປົກປັກຮັກສາປະເທດຊາດແລະກໍ່ສ້າງສັງຄົມນິຍົມໄປພ້ອມໆກັນ ດຳເນີນການປະຕິວັດສາມປະການໄປພ້ອມໆກັນ: ການປະ ຕິວັດກຳລັງການຜະລິດ, ການປະຕິວັດການພົວພັນການຜະລິດ, ການປະຕິວັດແນວຄິດ ວັດ ທະນະທຳ ໃນນັ້ນຖືເອົາການປະຕິວັດກຳລັງການຜະລິດມີຄວາມໝາຍຕັດສິນ. ເວລາໃດ ສຳເລັດ ຫລືສຳເລັດໂດຍພື້ນຖານ ເຈັດໜ້າທີ່ດັ່ງກ່າວເຫຼົ່ານັ້ນ ພວກເຮົາຈຶ່ງຈະບັນລຸໄດ້ ບັນດາຈຸດໝາຍຕົ້ນຕໍຂອງສະໄໝຂ້າມຜ່ານ.

ຄວາມຫຍຸ້ງຍາກ ແລະ ຄວາມຄ່ອງແຄ່ວຂອງພວກເຮົາ ບໍ່ແມ່ນພຽງແຕ່ວາງທິດ ທາງ ແລະ ໜ້າທີ່ຂອງສະໄໝຂ້າມຜ່ານອອກເທົ່ານັ້ນ ແຕ່ຕ້ອງຈັດແບ່ງສະໄໝຂ້າມຜ່ານ ອອກເປັນແຕ່ລະໄລຍະ ແລະ ວາງທິດທາງໜ້າທີ່ຂອງແຕ່ລະໄລຍະລະອຽດອີກ ໃຫ້ສອດຄ່ອງ

ກັບຈຸດພິເສດຂອງແຕ່ລະໄລຍະດັ່ງກ່າວ.

ອີງໃສ່ບັນດາບົດຮຽນທີ່ຖອດມາໄດ້ ໃນໄລຍະ 10 ກ່ວາປີ, ບົນພື້ນຖານການຕີລາຄາ ຖືກຕ້ອງ ສະພາວະເສດຖະກິດ-ສັງຄົມ ໃນປັດຈຸບັນຂອງປະເທດຊາດ, ອີງໃສ່ແນວທາງທີ່ ກອງປະຊຸມໃຫຍ່ຄັ້ງທີ່ III ຂອງພັກວາງອອກ ແລະ ອີງໃສ່ທິດທາງໜ້າທີ່ຕົ້ນຕໍ ຂອງສະ ໄໝຂ້າມຜ່ານ ທີ່ກ່າວເທິງນັ້ນ ກອງປະຊຸມໃຫຍ່ຄັ້ງນີ້ໄດ້ວາງທິດທາງ ແລະ ໜ້າທີ່ຕົ້ນ ຕໍ ໃນການຂະຫຍາຍເສດຖະກິດ-ສັງຄົມ ຮອດປີ 2000 ແລະແຜນການ 5 ປີເທື່ອທີ່ ສອງ ( 1986-1990). ເນື້ອໃນດັ່ງກ່າວນັ້ນຄື:

1/- ແກ້ໄຂບັນຫາທັນຍາຫານ ແລະ ອາຫານໃຫ້ໄດ້ຢ່າງໜັກແໜ້ນ ບົນພື້ນ ຖານ ແຫ່ງການຂະຫຍາຍການກະສິກຳຢ່າງຮອບດ້ານ. ສູ້ຊົນຮອດປີ1990 ຜົນຜະລິດດ້ານທັນຍາ ຫານໃນທົ່ວປະເທດໃຫ້ໄດ້ປະມານ 2 ລ້ານໂຕນ ເຖິງ 2,2 ລ້ານໂຕນ.

2/- ຈຳກັດ ແລະ ໄປເຖິງບ່ອນຢຸດຕິການຖາງປ່າເຮັດໄຮ່ ໂດຍພື້ນຖານ .

3/- ສ້າງໂຄງປະກອບກະສິກຳ-ປ່າໄມ້-ອຸດສາຫະກຳ ທີ່ສົມເຫດສົມຜົນໃຫ້ເປັນ ຕົວ ເປັນຕົນຂຶ້ນ ໃນຂັ້ນຕົ້ນ.

4/- ດຳເນີນການແບ່ງເຂດເສດຖະກິດ, ວາງແຜນກຳນົດກ່ຽວກັບການກໍ່ສ້າງຊົນນະ ບົດ ແລະ ຕົວເມືອງ.

5/- ຂະຫຍາຍການຄົມມະນາຄົມຂົນສົ່ງ ແລະ ການຕິດຕໍ່ສື່ສານ.

6/- ນຳໃຊ້ຄວາມກ້າວໜ້າທາງດ້ານວິທະຍາສາດ-ເຕັກນິກ, ຈັດຕັ້ງວຽກງານ ສຳ ຫລວດພື້ນຖານ.

7/- ປັບປຸງ ແລະ ເພີ່ມທະວີບົດບາດເປັນເຈົ້າພາທາງຂອງຂົງເຂດເສດຖະກິດຂອງ ລັດ, ຂະຫຍາຍຂົງເຂດເສດຖະກິດສະຫະກອນ.

8/- ປັບປຸງລະບົບການຄ້າສັງຄົມນິຍົມຢ່າງຮອບດ້ານ ແລະ ຂະຫຍາຍມັນຢ່າງ ແຂງ ແຮງ.

9/- ອອກແຮງປັບປຸງການເງິນ ແລະ ເງິນຕາໃຫ້ສະໝ່ຳສະເໝີ.

10/- ຂະຫຍາຍການພົວພັນທາງດ້ານເສດຖະກິດ ກັບ ຕ່າງປະເທດ .

11/- ກໍ່ສ້າງລະບົບກົດໝາຍສັງຄົມນິຍົມ ໃຫ້ເປັນຕົວເປັນຕົນຂຶ້ນ.

12/- ຂະຫຍາຍການສຶກສາ ວັດທະນະທຳ, ສາທາລະນະສຸກ .

ບັນດາໜ້າທີ່ເທິງນີ້ ແມ່ນໜ້າທີ່ຕົ້ນຕໍຂອງໄລຍະຕົ້ນຂອງສະໄໝຂ້າມຜ່ານຢູ່ ປະເທດ

ເຮົາ. ປະລິມານໜ້າວຽກນັ້ນ ແມ່ນໃຫຍ່ຫລວງ ແລະ ສັບສົນທີ່ສຸດ. ພັກເຮົານຳໜ້າທີ່ນຳພາປະຊາຊົນບັນດາເຜົ່າ ອອກແຮງປະຕິບັດບັນດາໜ້າທີ່ດັ່ງກ່າວຢ່າງເຄັ່ງຮ້ອນ ແລະ ປະດິດສ້າງ.

ກອງປະຊຸມໃຫຍ່ຍັງໄດ້ຊີ້ອອກຢ່າງຈະແຈ້ງວ່າ: " ບົນພື້ນຖານບັນດາທິດທາງ ແລະ ໜ້າທີ່ດັ່ງກ່າວມາເທິງນັ້ນ ໃນແຜນການ 5 ປີຄັ້ງນີ້ ພວກເຮົາຕ້ອງສຸມກຳລັງເຂົ້າໃສ່ການປະຕິບັດໂຄງການຄົບຊຸດ 5 ໂຄງການທີ່ມີຈຸດໝາຍຄື :

1/- ໂຄງການທັນຍາຫານ ແລະ ອາຫານ.

2/- ໂຄງການຈຳກັດ ແລະ ໄປເຖິງບ່ອນຢຸດຕິການຖາງປ່າເຮັດໄຮ່, ປົກປັກ ຮັກສາສິ່ງແວດລ້ອມ.

3/- ໂຄງການຜະລິດສິນຄ້າໃຊ້ສອຍ ແລະ ສິນຄ້າຂາອອກ.

4/- ໂຄງການຄົມມະນາຄົມຂົນສົ່ງ ແລະ ຕິດຕໍ່ສື່ສານ.

5/- ໂຄງການປະຕິຮູບການສຶກສາ, ການກໍ່ສ້າງ ແລະ ບຳລຸງພະນັກງານ, ການສ້າງຄົນໃໝ່ ສັງຄົມນິຍົມ " (1).

<u>ກ່ຽວກັບທິດທາງ ແລະ ໜ້າທີ່ວຽກງານປ້ອງກັນຊາດ, ປ້ອງກັນຄວາມສະຫງົບ</u> .

ປັດຈຸບັນ ສະພາບການທຸກດ້ານຂອງປະເທດເຮົານັບມື້ໄດ້ເປັນປົກກະຕິ ນັ້ນແມ່ນເງື່ອນໄຂສະດວກໃຫ້ພວກເຮົາປະຕິບັດບັນດາໜ້າທີ່ຂະຫຍາຍເສດຖະກິດ-ສັງຄົມ. ຢ່າງໃດກໍ່ຕາມໃນຊຸມປີຕໍ່ໜ້າ ສະພາບການຂອງໂລກຍັງສືບຕໍ່ພັນແປໄປຢ່າງສັບສົນ, ໃນຂົງເຂດອາຊີ - ອາຄະເນ ລັດທິຈັກກະພັດ ແລະພວກປະຕິການຍັງສືບຕໍ່ຮ່ວມມືກັນ ເພື່ອນ້າງເພການ ປະຕິວັດຂອງປະເທດເຮົາ ແລະ ສອງປະເທດ ຫວຽດນາມ ແລະ ກຳປູເຈຍອ້າຍນ້ອງ. ສະພາບການດັ່ງກ່າວ ຮຽກຮ້ອງໃຫ້ພວກເຮົາຕ້ອງມີສະຕິລະວັງຕົວໃນທຸກຂົງເຂດການເມືອງ, ການທະຫານ, ເສດຖະກິດ, ສັງຄົມ, ວັດທະນະທຳ ແລະ ຕ່າງປະເທດ ແລະເຮົາຕ້ອງເປັນເຈົ້າການຕ້ານຄືນທຸກກົນອຸບາຍແບ່ງແຍກ, ຊື້ຈ້າງ ຈອບອອຍ, ສົງຄາມຈິດຕະ ສາດຂອງສັດຕູ.

---

(1). ລາຍງານການເມືອງຂອງຄະນະບໍລິຫານງານສູນກາງພັກຄັ້ງທີ IV ,ເບິ່ງ ວາລະສານ ອະລຸນໃໝ່ ສະບັບພິເສດ ວ່າດ້ວຍກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກ, ເດືອນ 11 ປີ 1986 ໜ້າ 85 .

ກອງປະຊຸມໃຫຍ່ໄດ້ຊີ້ອອກຢ່າງຈະແຈ້ງວ່າ: "ດ້ວຍນັ້ນການປ້ອງກັນຊາດ - ປ້ອງກັນຄວາມສະຫງົບ ຈຶ່ງຍັງເປັນໜ້າທີ່ ທີ່ມີຄວາມສຳຄັນອັນດັບໜຶ່ງ. ພວກເຮົາຕ້ອງລະດົມກຳລັງແຮງສັງລວມຂອງທົ່ວປະເທດ, ອອກແຮງປັບປຸງການປ້ອງກັນຄວາມສະຫງົບຢ່າງ ຮອບດ້ານຢູ່ຮາກຖານ, ຈັດຕັ້ງທ່າສະໜາມປ້ອງກັນຊາດ, ປ້ອງກັນຄວາມສະຫງົບຢູ່ທ້ອງຖິ່ນໃຫ້ໜັກແໜ້ນ,ຕັ້ງໜ້າປັບປຸງ ແລະ ຍົກລະດັບຂະພາບຂອງບັນດາກຳລັງປະກອບອາວຸດ,ກຳລັງປ້ອງກັນຄວາມສະຫງົບໃຫ້ສູງຂຶ້ນ , ສົມທົບຢ່າງແໜ້ນແຟ້ນລະຫວ່າງເສດຖະກິດກັບ ການປ້ອງກັນຊາດ, ສ້າງເຫຼົ້າພະລັງໃນທຸກດ້ານຂອງປະເທດເຮົາ, ເດັດດ່ຽວທັບມ້າງ ທຸກການເຄື່ອນໄຫວມ້າງເພທຳລາຍຂອງສັດຕູ, ປົກປັກຮັກສາພາລະກິດອອກແຮງງານສ້າງສາໃນສັນຕິພາບຂອງປະຊາຊົນເຮົາ, ປົກປັກຮັກສາປະເທດຊາດໄວ້ໃຫ້ໝັ້ນຄົງ.ພ້ອມກັບກອງທັບ ແລະ ປະຊາຊົນ ຫວຽດນາມ, ກຳປູເຈຍອ້າຍນ້ອງ ປົກປັກຮັກສາໝາກຜົນຂອງການປະຕິວັດ ປະກອບສ່ວນເຮັດໃຫ້ອາຊີອາຄະເນ ກາຍເປັນພາກພື້ນແຫ່ງສັນຕິພາບ, ສະຖຽນລະພາບ, ມິດຕະພາບ ແລະ ການຮ່ວມມື " (2).

ປັດໃຈຕັດສິນທີ່ສຸດ ເພື່ອປັບປຸງພື້ນຖານການປ້ອງກັນຊາດ ຂອງປະເທດເຮົາແມ່ນການນຳພາຂອງພັກ. ບັນດາອົງຄະນະພັກແຕ່ລະຂັ້ນ ຕ້ອງເອົາໃຈໃສ່ຢູ່ສະເໝີ ເພື່ອກໍ່ສ້າງກຳລັງປະກອບອາວຸດ, ປ້ອງກັນຄວາມສະຫງົບໃຫ້ເຂັ້ມແຂງ ຮອບດ້ານ.

<u>ດ້ານນະໂຍບາຍຕ່າງປະເທດຂອງພັກ ແລະ ລັດເຮົາ.</u>

ກອງປະຊຸມໄດ້ຢືນຢັນວ່າ: ການເພີ່ມທະວີ ແລະ ປັບປຸງຄວາມສາມັກຄີແບບສູ້ຮົບຢ່າງບໍ່ຢຸດຢັ້ງ, ການເປີດກວ້າງການຮ່ວມມືຮອບດ້ານກັບຫວຽດນາມ, ກຳປູເຈຍ, ກັບສະ ຫະພາບ ໂຊວຽດ ແລະ ບັນດາປະເທດອ້າຍນ້ອງ ໃນວົງຄະນາຍາດສັງຄົມນິຍົມນັ້ນເປັນແນວທາງຕ່າງປະເທດອັນສະເໝີຕົ້ນສະເໝີປາຍຂອງພັກ ແລະ ລັດເຮົາ, ເປັນປັດໃຈຕັດສິນອັນດັບໜຶ່ງ ສຳລັບໄຊຊະນະຂອງປະຊາຊົນເຮົາໃນໄລຍະປະຕິວັດສະເພາະໜ້າແລະຍາວນານ.

ພັກເຮົາໄດ້ຕັດສິນໃຈ ເຮັດສຸດຄວາມສາມາດຂອງຕົນ ເພື່ອປະກອບສ່ວນເຂົ້າໃນການເພີ່ມທະວີຄວາມສາມັກຄີເປັນເອກະພາບຂອງຂະບວນການກອມມູນິດ ແລະ ກຳມະກອນສາກົນ ບົນພື້ນຖານລັດທິ ມາກ-ເລນິນ ແລະ ລັດທິສາກົນກຳມາຊີບ.

---

(2). ໃຫ້ເບິ່ງວາລະສານ "ອະລຸນໃໝ່" ສະບັບພິເສດ 11.1986 ໜ້າ103-104.

ພວກເຮົາເພີ່ມທະວີສາຍພົວພັນມິດຕະພາບ ແລະ ຮ່ວມມືກັບບັນດາປະເທດບໍ່ຮ່ວມ ກຸ່ມ ພວກເຮົາສະໜັບສະໜູນຢ່າງແຂງແຮງ ການຕໍ່ສູ້ຂອງປະຊາຊົນໃນບັນດາປະເທດອາຊີ - ອາຟະຣິກກາ, ອາເມລິກາລາຕິນ, ຕ້ານນະໂຍບາຍແຊກແຊງຮຸກຮານ ແລະ ນະໂຍບາຍລ່າເມືອງຂຶ້ນແບບໃໝ່ຂອງຈັກກະພັດອາເມລິກາ. ພວກເຮົາເດັດດ່ຽວສະໜັບ ສະໜູນການຕໍ່ສູ້ຂອງຂະບວນການກຳມະກອນ ແລະ ປະຊາຊົນຜູ້ອອກແຮງງານ ໃນບັນດາປະເທດທຶນນິຍົມ ທີຂະຫຍາຍຕົວ ເພື່ອສັນຕິພາບ ປະຊາທິປະໄຕ, ເພື່ອສິດແຫ່ງການດຳລົງຊີວິດ ແລະ ຄວາມກ້າວໜ້າທາງສັງຄົມ.

ໂດຍເປັນຜູ້ທີ່ໄດ້ຜ່ານຄວາມຫຍຸ້ງຍາກລຳບາກ ແລະ ການເສຍສະລະໃນການຕໍ່ສູ້ຕ້ານຈັກກະພັດຜູ້ຮຸກຮານເປັນເວລາຫລາຍສິບປີມາແລ້ວນັ້ນ ໃນສູ່ມື້ນີ້ ປະຊາຊົນເຮົາ ມີຄວາມປາດຖະໜາຢ່າງແຮງກ້າທີ່ສຸດ ໃນການມີຊີວິດຢູ່ໃນສັນຕິພາບ ເພື່ອອອກແຮງສ້າງສາ ປະເທດຊາດບ້ານເມືອງຂອງຕົນ. ຍ້ອນເຫດຜົນດັ່ງກ່າວນັ້ນເອງ ພັກ ແລະ ລັດເຮົາ ຈຶ່ງ ຖືເອົາໜ້າທີ່ຕໍ່ສູ້ ເພື່ອປົກປັກຮັກສາສັນຕິພາບ ເປັນໜ້າທີ່ອັນສຳຄັນທີ່ສຸດຂອງທົ່ວພັກ, ທົ່ວປວງຊົນເຮົາ.

ກອງປະຊຸມໃຫຍ່ໄດ້ສະແດງເຈດຕະນາດີ ແລະ ມີທັດສະນະອັນຖືກຕ້ອງ ໃນການ ພົວພັນລະຫວ່າງປະເທດເຮົາກັບປະເທດໄທ, ກັບບັນດາປະເທດໃນກຸ່ມ ອາຊຽນ ກັບປະເທດຈີນ, ອາເມລິກາ ແລະ ສືບຕໍ່ຂະຫຍາຍການພົວພັນກັບທຸກປະເທດ ໂດຍບໍ່ຈຳແນກລະບອບການເມືອງ ແລະ ສັງຄົມທີ່ແຕກຕ່າງກັນ ບົນພື້ນຖານການເຄົາລົບເອກະລາດ, ອະທິ ປະໄຕ, ສະເໝີພາບ ແລະ ຕ່າງຝ່າຍຕ່າງມີຜົນ.

<u>ກ່ຽວກັບການເພີ່ມທະວີບົດບາດການນຳພາຂອງພັກ.</u>

ການນຳພາຂອງພັກ ແມ່ນປັດໄຈຕົ້ນຕໍ ຕັດສິນທຸກໄຊຊະນະຂອງການປະຕິວັດ. ເພື່ອປະຕິບັດບັນດາໜ້າທີ່ດັ່ງກ່າວເທິງນັ້ນ ບັນຫາທີ່ມີຄວາມໝາຍຕັດສິນ ຕ້ອງຍົກສູງຄວາມ ສາມາດນຳພາ ແລະ ກຳລັງສູ້ຮົບຂອງພັກ. ກອງປະຊຸມໃຫຍ່ໄດ້ຊີ້ອອກວ່າ "ໃນໄລຍະຕໍ່ໜ້ານີ້ ໜ້າທີ່ຂອງການກໍ່ສ້າງພັກ ແມ່ນປູລະນະບັນດາອົງການຈັດຕັ້ງນຳພາ ແລະ ຄຸ້ມຄອງ, ເຊີດຊູກຳລັງສູ້ຮົບຂອງອົງການຈັດຕັ້ງຮາກຖານ, ຈັດແບ່ງວຽກງານພະນັກງານ, ເສີມຂະຫຍາຍບົດບາດນຳໜ້າ ເປັນແບບຢ່າງຂອງສະມາຊິກພັກ, ດັດແປງແບບແຜນວິທີເຮັດວຽກ, ຮັກສາບັນດາຫລັກການຈັດຕັ້ງ ແລະ ດຳເນີນຊີວິດຢູ່ໃນພັກໃຫ້ເຂັ້ມງວດ, ຊຸກຍູ້ວຽກງານແນວຄິດ ແລະ ທິດສະດີຢ່າງແຂງແຮງ ແນໃສ່ຮັບເອົາຈິດສຳນຶກໃໝ່ ແລະ ຈິນຕະນາ ການ

ໃໝ່ ທັງນີ້ກໍເພື່ອເຮັດຫຼ້ອນພາລະກຳປະຫວັດສາດອັນໜັກໜ່ວງ ແຕ່ມີກຽດສະຫງ່າ ຂອງພັກເຮົາ ໃນໄລຍະໃໝ່ຂອງການປະຕິວັດ " (3).

ກ່ອນອື່ນໝົດ ຕ້ອງເອົາໃຈໃສ່ບູລະນະອົງການຈັດຕັ້ງນຳພາ ແລະ ຊຸ້ມຄອງຍົກສູງກຳລັງສູ້ຮົບຂອງອົງການຈັດຕັ້ງຮາກຖານ. ໃນຊຸມປີຕໍ່ໜ້ານີ້ ພວກເຮົາຈະຕ້ອງສືບຕໍ່ປັບປຸງລະບົບພະເດັດການກຳມາຊີບໃຫ້ໜັກແໜ້ນເຂັ້ມແຂງ ໃນການປັບປຸງລະບົບພະເດັດການ ກຳມາຊີບນັ້ນ ກ່ອນອື່ນໝົດ ຈະຕ້ອງບູລະນະການຈັດຕັ້ງພັກຢູ່ຂັ້ນຕ່າງໆ ອັນແມ່ນໃສ່ຮັບປະ ກັນການນຳພາຮອບດ້ານ, ເດັດຂາດ ແລະ ໂດຍກົງຂອງພັກນັບແຕ່ຂອດວາງແນວທາງ, ນະໂຍບາຍ ຈົນເຖິງຂອດຈັດຕັ້ງປະຕິບັດ ກວດກາ. ໃນປັດຈຸບັນ ຂອດອ່ອນກວ່າໝູ່ ໃນ ລະບົບການຈັດຕັ້ງຂອງພັກ ແມ່ນການຈັດຕັ້ງພັກຮາກຖານ, ດັ່ງນັ້ນ ພວກເຮົາຈຶ່ງຕ້ອງຖື ເອົາການບູລະນະການຈັດຕັ້ງພັກຮາກຖານເປັນບັນຫາອັນດັບໜຶ່ງ ເຊິ່ງທົ່ວພັກ ຈະຕ້ອງເອົາໃຈໃສ່. ຢາກປັບປຸງຮາກຖານພັກໃຫ້ໜັກແໜ້ນ ຈະຕ້ອງຕິດພັນກັບການປັບປຸງຂັ້ນເມືອງແລະຂັ້ນແຂວງ ເພື່ອໃຫ້ຂັ້ນເຫລົ່ານັ້ນ ມີຄວາມສາມາດພຽງພໍ ໃນການນຳພາ ແລະຊີ້ນຳ ຮາກຖານ.

ການບູລະນະບັນດາອົງການຈັດຕັ້ງນຳພາ ແລະ ຊຸ້ມຄອງນັ້ນ ບໍ່ແມ່ນຈະຈຳກັດ ແຕ່ຂອບເຂດຂອງບັນດາການຈັດຕັ້ງພັກ ເທົ່ານັ້ນ ຫາກຍັງລວມທັງບັນດາອົງການຈັດຕັ້ງ ລັດ ແລະໃນບັນດາອົງການຈັດຕັ້ງມະຫາຊົນອີກດ້ວຍ. ເຮັດໄດ້ດັ່ງນັ້ນ ຈຶ່ງຈະເສີມຂະຫຍາຍໄດ້ກຳລັງແຮງສັງລວມຂອງລະບົບພະເດັດການກຳມາຊີບ ເພື່ອປະຕິບັດທຸກໜ້າທີ່ທີ່ພັກວາງອອກນັ້ນ ໃຫ້ສຳເລັດຜົນ.

ການກໍ່ສ້າງ ແລະ ປັບປຸງບູລະນະບັນດາອົງການຈັດຕັ້ງພັກ ແລະ ອົງການຈັດຕັ້ງ ມະຫາຊົນນັ້ນ ບໍ່ສາມາດຕັດແຍກອອກຈາກວຽກງານພະນັກງານ ແລະ ການເສີມຂະຫຍາຍບົດບາດນຳໜ້າ ເປັນແບບຢ່າງຂອງສະມາຊິກພັກ ແລະ ການເຊີດຊູຄຸນນະພາບຂອງພະ ນັກງານ-ສະມາຊິກພັກ.

ເພື່ອຢາກຕອບສະໜອງ ຄວາມຮຽກຮ້ອງຕ້ອງການ ອັນໃຫຍ່ຫລວງຂອງພາລະ ກິດປະຕິວັດໃນປັດຈຸບັນນີ້ ບັນຫາສຳຄັນທີ່ຕັ້ງຂຶ້ນ ຕ້ອງດັດແປງວຽກງານພະນັກງານ ໂດຍ ພື້ນຖານ ນັບແຕ່ທັດສະນະໄປເຖິງກົນໄກເລືອກເຟັ້ນ, ບຳລຸງ ແລະ ສັບຊ້ອນພະນັກງານກ່ອນ

---

(3). ໃຫ້ເບິ່ງວາລະສານ "ອະລຸນໃໝ່" ສະບັບພິເສດ 11.1986 ໜ້າ 122 .

ອື່ນໆຫມົດ ແມ່ນຕ້ອງດັດແປງທັດສະນະຂອງຜູ້ເຮັດວຽກງານຈັດຕັ້ງພະນັກງານ. ໃນວຽກງານດັດແປງພະນັກງານ ຕ້ອງອອກແຮງຕ້ານທຸກປະກົດການຂອງລັດທິອາດຍາສິດ, ລັດທິຮູບການ, ລັດທິເອກະຊົນ, ແນວຄິດເຜົ່າຊົນຄັບແຄບ, ແນວຄິດພາກສ່ວນ, ທ້ອງຖິ່ນ ແລະອື່ນໆ... ກຳແຫນັ້ນບັນດາມາດຖານກ່ຽວກັບຄຸນສົມບັດ ແລະ ຄວາມສາມາດຂອງພະນັກງານ ໃນໄລຍະການປະຕິວັດປັດຈຸບັນດັ່ງນີ້:

"-ຈົງຮັກພັກດີຕໍ່ພາລະກິດຂອງພັກ, ກຳແຫນັ້ນແນວທາງ, ນະໂຍບາຍຂອງພັກແລະລັດ, ມີມານະຈິດຜ່ານຜ່າຄວາມຫຍຸ້ງຍາກຕ່າງໆ ເພື່ອສຳເລັດຫນ້າທີ່ທີ່ໄດ້ຮັບມອບຫມາຍ, ມີຫລັກຫມັ້ນມິດ-ສັດຕູຈະແຈ້ງ, ມີສະຕິຕໍ່ການຈັດຕັ້ງ, ລະບຽບວິໄນ ແລະ ມີນ້ຳໃຈຮັບຜິດຊອບ, ມີການພົວພັນຢ່າງສະຫນິດແຫນ້ນກັບມະຫາຊົນ, ມີຊີວິດທີ່ປອດໃສຂາວສະອາດ, ງ່າຍດາຍ.

- ມີຄວາມຮູ້ທາງດ້ານທິດສະດີ, ວັດທະນະທຳ, ວິທະຍາສາດ-ເຕັກນິກ, ວິຊາ ສະເພາະ ວິຊາການທີ່ສົມຄູ່ກັບວຽກງານ ທີ່ໄດ້ຮັບມອບຫມາຍ.

- ມີຄວາມສາມາດຈັດຕັ້ງປະຕິບັດ ແລະ ສາມາດວາງມາດຕະການທີ່ສອດຄ່ອງໄດ້, ກ້າປ່ຽນແປງວິທີເຮັດວຽກ ແບບເກົ່າແກ່ ຫລ້າສະໄຫມ, ຮູ້ອຳນວຍຄວບຄຸມວຽກງານ, ຮູ້ເຕົ້າໂຮມ, ລະດົມພະນັກງານ ແລະ ມະຫາຊົນທ້າວທັນປະຕິບັດວຽກງານຢ່າງມີປະສິດ ທິຜົນ" (4).

ບົນພື້ນຖານບັນດາມາດຕະການດັ່ງກ່າວ ພວກເຮົາຕ້ອງເລືອກເຟັ້ນ ແລະ ຈັດວາງພະນັກງານໃຫ້ຖືກຕ້ອງ, ສົມທົບພະນັກງານເກົ່າ ແລະ ພະນັກງານໃຫມ່ ເພື່ອເຮັດຫຼ້ອນຫນ້າທີ່ສະເພາະຫນ້າ ທັງຮັບປະກັນລັກສະນະສືບທອດໃນການກໍ່ສ້າງຖັນແຖວພະນັກງານ ເພື່ອຕອບສະຫນອງຄວາມຮຽກຮ້ອງຕ້ອງການ ໃນຍາວນານ.

ເພື່ອຍົກສູງປະສິດທິພາບໃນການນຳພາຂອງພັກ ຍັງຕ້ອງປ່ຽນແປງແບບແຜນວິທີ ເຮັດວຽກຢູ່ໃນທົ່ວພັກ.

ການປ່ຽນແປງວິທີເຮັດວຽກ ຫມາຍຄວາມວ່າ ພວກເຮົາຕ້ອງລົບລ້າງວິທີເຮັດວຽກເງິນນຳແຕ່ມະຍົກມະຍ່ອຍ ກະຈັດກະຈາຍ ໄດ້ສ່ຳໃດກໍເອົາສ່ຳນັ້ນ, ເຮັດຕາມເປັນຕາມເກີດ, ອືດອາດຊັກຊ້າ ຕາມແບບຜູ້ຜະລິດນ້ອຍ ເພື່ອຫັນໄປສູ່ການກໍ່ສ້າງແບບແຜນເຮັດວຽກທີ່ວິທະຍາສາດຢ່າງແທ້ຈິງ, ມີການສຳຫລວດຄົ້ນຄ້ວາ, ໃຈ້ແຍກສະພາບການຕົວຈິງ, ກຳແຫນັ້ນ

(4). ໃຫ້ເບິ່ງວາລະສານ "ອະລຸນໃຫມ່" ສະບັບພິເສດ 11.1986 ຫນ້າ132-133.

ທາດແທ້ຂອງບັນຫາ, ມີການກະກຽມຢ່າງລະອຽດ ຮອບຄອບໃນການວາງແຜນນະໂຍບາຍ ແລະ ຕັດສິນວຽກງານຕ່າງໆ .

ການປ່ຽນແປງວິທີເຮັດວຽກຍັງມີຄວາມໝາຍວ່າ ຕ້ອງກຳຈັດແກ້ໄຂສະພາວະການ ທີ່ເປັນມາຢູ່ໃນຫລາຍຂັ້ນ ແລະ ຫລາຍຂະແໜງການຄື ຍັງບໍ່ທັນປະຕິບັດວຽກງານກວດ ກາໄດ້ດີ ແລະ ການກວດກາຍັງບໍ່ທັນເປັນແບບແຜນປົກກະຕິເທື່ອ, ພວກເຮົາຕ້ອງເພີ່ມທະ ວີວຽກງານກວດກາ ເພື່ອຊຸກຍູ້ໃຫ້ເຫັນຈຸດດີ , ປັດໄຈໃໝ່ ທີ່ຈະຕ້ອງເສີມຂະຫຍາຍ, ດັດແປງສິ່ງທີ່ຜິດເຂວ ແລະ ຂໍ້ຂາດຕົກບົກພ່ອງຕ່າງໆ ໃນການປະຕິບັດແນວທາງນະໂຍ ບາຍຂອງພັກນັ້ນ ໃຫ້ໄດ້ຢ່າງທັນການ. ຍິ່ງໄປກວ່ານັ້ນ ກໍ່ແມ່ນເພື່ອປ່ຽນແປງ ເພີ່ມເຕີມ ແຜນນະໂຍບາຍຂໍ້ຕົກລົງຕ່າງໆ ທີ່ເຫັນວ່າບໍ່ສອດຄ່ອງກັບແຜນນະໂຍບາຍໃໝ່.

ການສ້າງແບບແຜນເຮັດວຽກແບບໃໝ່ ແມ່ນແນໃສ່ຮັກສາຫລັກການລວມສູນ-ປະຊາທິປະໄຕໃນການດຳເນີນຊີວິດພັກໃຫ້ເຂັ້ມງວດ, ເສີມຂະຫຍາຍປະຊາທິປະໄຕ ຢ່າງ ແທ້ຈິງພ້ອມກັນນັ້ນກໍ່ຮັບປະກັນການນຳລວມສູນ. ເພື່ອປະຕິບັດຫລັກການລວມສູນ-ປະຊາທິ ປະໄຕພວກເຮົາຕ້ອງກຳນົດເປັນລະບຽບການຕົວຈິງ ແຫ່ງການເຄື່ອນໄຫວ ແລະ ການດຳເນີນຊີວິດຂອງບັນດາການຈັດຕັ້ງພັກ ແລະ ຕ້ອງປະຕິບັດມັນຢ່າງເຂັ້ມງວດ. ເພື່ອປົກປັກຮັກ ສາແລະ ເພີ່ມທະວີບົດບາດນຳພາຂອງພັກ ພວກເຮົາຕ້ອງເອົາໃຈໃສ່ເປັນພິເສດວຽກງານທິດສະດີ, ຕ້ອງດັດແປງຈິດສຳນຶກ ແລະ ຈິນຕະນາການຂອງຕົນ. ປັດຈຸບັນນີ້ ໜ້າທີ່ ອັນດັບໜຶ່ງຂອງພວກເຮົາຢູ່ໃນວຽກງານແນວຄິດ ແມ່ນຕ້ອງກຳແໜ້ນ ສະພາບການແນວຄິດຂອງພະນັກງານ, ສະມາຊິກພັກ ແລະ ຂອງປະຊາຊົນເຮົາ; ມີແຜນການກ່ຽວກັບ ວຽກງານແນວຄິດໃນສະເພາະໜ້າ ແລະຍາວນານ; ຮູ້ລະດົມ ແລະປະສານສົມທົບກຳລັງ ຕ່າງ ໆເພື່ອພ້ອມກັນເຮັດວຽກງານແນວຄິດ; ຄົ້ນຄ້ວາບັນຫາ ບັນດາຮູບການ ແລະ ວິທີ ອັນສອດຄ່ອງກັບແຕ່ລະເປົ້າໝາຍ ແນໃສ່ເຮັດໃຫ້ທຸກຄົນເຂົ້າໃຈສະພາວະເປັນຈິງ ທາງເສດ ຖະກິດ-ສັງຄົມຂອງປະເທດຊາດໃນປັດຈຸບັນ ໃຫ້ຈະແຈ້ງ; ມີສະຕິເຂົ້າຮ່ວມການປະຕິບັດ ບັນດາທິດທາງ ແລະ ໜ້າທີ່ ທີ່ກອງປະຊຸມໃຫຍ່ຂອງພັກຄັ້ງທີ IV ໄດ້ວາງ ອອກນັ້ນ ດ້ວຍຄວາມຕັ້ງໜ້າ ເພື່ອເຮັດໃຫ້ສະພາວະເປັນຈິງດັ່ງກ່າວນັ້ນ ມີການປ່ຽນແປງກ້າວໜ້າ ພາປະເທດຊາດຂອງເຮົາກ້າວຂຶ້ນເທື່ອລະກ້າວ.

ຄຽງຄູ່ກັບການເພີ່ມທະວີວຽກງານແນວຄິດນັ້ນ ພັກເຮົາຍັງຕ້ອງໄດ້ເອົາໃຈໃສ່ເປັນ ພິເສດເຖິງວຽກງານທິດສະດີ. ການຊຸກຍູ້ວຽກງານແນວຄິດ ແລະ ທິດສະດີນັ້ນ ເປັນ ການ

ປະກອບສ່ວນຊຸກຍູ້ການຂະຫຍາຍຕົວຂອງເສດຖະກິດ–ສັງຄົມ ແລະ ເປັນການກະທົບ ໂດຍກົງເຂົ້າໃນການສ້າງຄົນໃຫມ່ ສັງຄົມນິຍົມ.

ດ້ວຍຄວາມປິຕິຊົມຊື່ນ ຕໍ່ໄຊຊະນະອັນໃຫຍ່ຫລວງຂອງວຽກງານປົກປັກຮັກສາປະ ເທດຊາດ ແລະ ກໍ່ສ້າງສັງຄົມນິຍົມ ໃນ 10 ປີກ່ວາຜ່ານມາ ແລະ ປິຕິຊົມຊື່ນຕໍ່ຜົນສຳເລັດອັນສະຫງ່າງາມຂອງກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກ. ທົ່ວພັກ ທົ່ວປວງຊົນເຮົາ ຈົ່ງຫ້າວຫັນອອກແຮງປະຕິບັດບັນດາມະຕິຂອງກອງປະຊຸມໃຫຍ່, ພາການປະຕິວັດຂອງປະເທດເຮົາສືບຕໍ່ກ້າວຂຶ້ນ ຍາດເອົາໄຊຊະນະໃຫມ່ ຍິ່ງໃຫຍ່ກ່ວາເກົ່າ.

*

* *



# ທິດທາງແລະໜ້າທີ່ພັດທະນາ ເສດຖະກິດ–ສັງຄົມ ຂອງສາທາລະນະລັດ ປະຊາທິປະໄຕ ປະຊາຊົນລາວ ໃນແຜນການ 5 ປີ ຄັ້ງທີ່ II (1986–1990)

ສະເໜີໂດຍ ສະຫາຍ ໜູຮັກ ພູມສະຫວັນ
ກຳມະການ ກົມການເມືອງ ສູນກາງພັກ.

ຮຽນ : ຄະນະປະທານ ທີ່ນັບຖື !
ບັນດາ ສະຫາຍຜູ້ແທນ ທີ່ຮັກແພງ !
ບັນດາແຂກ ທີ່ນັບຖື !

ລາຍງານການເມືອງຂອງຄະນະບໍລິຫານງານສູນກາງພັກ ສະເໜີໂດຍສະຫາຍເລຂາທິການໃຫຍ່ ໄກສອນ ພົມວິຫານ ໄດ້ຍົກໃຫ້ເຫັນຜົນສຳເລັດຂອງການພັດທະນາເສດຖະກິດສັງຄົມໃນຊຸມປີຜ່ານມາ ແລະ ໄດ້ວາງທິດທາງ, ໜ້າທີ່ການພັດທະນາເສດຖະກິດ–ສັງຄົມສຳລັບຊຸມປີຕໍ່ໜ້າ.

ບັນດາຜົນສຳເລັດທີ່ປະຊາຊົນເຮົາຍາດມາໄດ້ ພາຍໃຕ້ການນຳພາຂອງພັກນັ້ນ ແມ່ນມີ

ຄວາມໝາຍສຳຄັນທີ່ສຸດ ມັນໄດ້ຢັ້ງຢືນວ່າ ພັກເຮົາໄດ້ໝູນໃຊ້ບັນດາຫລັກມູນທົ່ວໄປ ຂອງລັດທິ ມາກ-ເລນິນ ກ່ຽວກັບການກໍ່ສ້າງສັງຄົມນິຍົມ ເຂົ້າໃສ່ສະພາບການຕົວຈິງຂອງ ປະເທດເຮົາຢ່າງຖືກຕ້ອງ ແລະ ປະດິດສ້າງ, ພັກເຮົາໄດ້ເຕີບໃຫຍ່ໃນພາລະກຳຈັດຕັ້ງ ນຳພາ ພາລະກິດກໍ່ສ້າງສັງຄົມນິຍົມ, ມັນໄດ້ສະແດງໃຫ້ເຫັນຢ່າງມີຊີວິດຊີວາ ກ່ຽວກັບ ອິດທິພົນອັນໃຫຍ່ຫລວງຂອງພັກຢູ່ໃນໝູ່ປະຊາຊົນ ແລະຄວາມເຊື່ອໝັ້ນອັນຕາຍໃຈ ຂອງມະຫາຊົນ ທີ່ມີຕໍ່ພັກ.

ເພື່ອຜັນຂະຫຍາຍທິດທາງການພັດທະນາເສດຖະກິດ-ສັງຄົມ ໃນຊຸມປີຕໍ່ໄປ ເຊິ່ງ ໄດ້ກຳນົດໄວ້ໃນລາຍງານການເມືອງນັ້ນ, ບົດລາຍງານນີ້ຈະສັງລວມຕີລາຄາການປະຕິບັດທິດທາງ ດ້ານເສດຖະກິດ-ສັງຄົມ ໃນແຜນການ 5 ປີຄັ້ງທີ I (1981-1985), ຈະສະເໜີທິດທາງ, ໜ້າທີ່ ແລະ ວິທີການຕົ້ນຕໍຂອງແຜນການພັດທະນາເສດຖະກິດ-ສັງຄົມ 5 ປີຄັ້ງທີ II (1986-1990).





# ພາກທີ ໜຶ່ງ

## ການພັດທະນາເສດຖະກິດ-ສັງຄົມຂອງປະເທດເຮົາໃນຊຸມປີ1981-1985

ໃນການຈັດຕັ້ງປະຕິບັດແຜນການ 5 ປີຄັ້ງທີ I ທີ່ກອງປະຊຸມໃຫຍ່ຄັ້ງທີ III ຂອງພັກປະຊາຊົນປະຕິວັດລາວໄດ້ວາງອອກນັ້ນ, ປະຊາຊົນເຮົາ ໄດ້ປະສົບກັບຄວາມຫຍຸ້ງຍາກນາງປະການ ທີ່ມາຈາກຈຸດເລີ່ມຕົ້ນ ຂອງເສດຖະກິດປະເທດເຮົາຍັງຕ່ຳເກີນໄປ. ສັດຕູຊ້ຳພັດໄດ້ອອກແຮງມ້າງເພທຳລາຍຢ່າງເປັນປະຈຳ, ແຕ່ຍ້ອນມີແນວທາງອັນຖືກຕ້ອງ ແລະການຊີ້ນຳອັນສະຫລາດສ່ອງໃສຂອງສູນກາງພັກ ຍ້ອນການຈັດຕັ້ງຈຸ້ມຄອງຢ່າງຕັ້ງໜ້າ ຂອງບັນດາຂະແໜງການ ແລະຂັ້ນຕ່າງໆ ແລະໂດຍໄດ້ຮັບການຊ່ວຍເຫລືອຂອງສາກົນ, ປະຊາຊົນເຮົາໃນທົ່ວປະເທດ ຈຶ່ງຍາດໄດ້ຜົນສຳເລັດອັນສຳຄັນໃນການຂະຫຍາຍເສດຖະກິດ-ສັງຄົມ. ໃນປີ 1985, ຖ້າສົມທຽບໃສ່ປີ 1980 ຍອດຜະລິດຕະພັນສັງຄົມພາຍໃນປະເທດເພີ່ມຂຶ້ນ 54%, ລາຍໄດ້ແຫ່ງຊາດພາຍໃນປະເທດເພີ່ມຂຶ້ນ 48%, ການລົງທຶນກໍ່ສ້າງພື້ນຖານ ທັງໝົດເພີ່ມຂຶ້ນ 41%, ຜະລິດຕະພາບຂອງງານສັງຄົມເພີ່ມຂຶ້ນ 28%. ລາຍໄດ້ ແຫ່ງຊາດສະເລ່ຍໃສ່ຫົວຄົນເພີ່ມຂຶ້ນ 12,8%, ສະເລ່ຍຜົນຜະລິດເຂົ້າເປືອກຕໍ່ຫົວຄົນໄດ້ 390 ກິ

ໂລ (ເພີ່ມຂຶ້ນ 18% ທຽບໃສ່ປີ 1980), ເຊິ່ງເຮັດໃຫ້ພວກເຮົາ ສາມາດກຸ້ມຕົນ ເອງດ້ານທັນຍາຫານ ແລະ ອາຫານ ໂດຍພື້ນຖານ, ພ້ອມກັນນັ້ນ ລະບອບເງິນເດືອນຂອງພະນັກງານ ແລະ ກຳມະກອນກໍ່ໄດ້ຮັບການດັດແປງໃຫ້ດີຂຶ້ນ, ຊີວິດການເປັນຢູ່ທາງດ້ານວັດຖຸ ແລະ ວັດທະນະທຳຂອງປະຊາຊົນບັນດາເຜົ່າກໍ່ລ້ວນແຕ່ໄດ້ຮັບການປ່ຽນແປງຕື່ມອີກກ້າວໜຶ່ງ.

ດ້ານກະສິກຳ: ໃນປີ 1985 ຍອດຜະລິດພັນກະສິກຳເພີ່ມຂຶ້ນ 42%, ຜົນຜະລິດເຂົ້າເປືອກບັນລຸໄດ້ 1,4 ລ້ານໂຕນ ທຽບໃສ່ປີ 1980 ເພີ່ມຂຶ້ນ 32%. ຜົນຜະລິດພືດອຸດສາຫະກຳບາງຊະນິດກໍ່ໄດ້ຂະຫຍາຍຕົວ, ເຊັ່ນ : ໃບຢາສູບເພີ່ມຂຶ້ນ 32%, ຖົ່ວຂຽວ ເພີ່ມຂຶ້ນ 37%, ຖົ່ວເຫລືອງເພີ່ມຂຶ້ນ 61%, ກາເຟເພີ່ມຂຶ້ນ 30%. ຂະແໜງລ້ຽງສັດ ກໍ່ໄດ້ສືບຕໍ່ຂະຫຍາຍຕົວ: ຄວາຍ, ງົວ ເພີ່ມຂຶ້ນ 19%, ໝູເພີ່ມຂຶ້ນ 29%, ສັດປີກເພີ່ມ ຂຶ້ນ 57% .

ໃນແຜນການ 5 ປີທີ່ຜ່ານມາຍັງໄດ້ເອົາໃຈໃສ່ປັບປຸງ ແລະກໍ່ສ້າງພື້ນຖານວັດຖຸ-ເຕັກນິກຈຳນວນໜຶ່ງ ເພື່ອຮັບປະກັນໃຫ້ການກະສິກຳຂະຫຍາຍຕົວຢ່າງແຂງແຮງ ຄື : ໄດ້ກໍ່ສ້າງສູນຜະລິດແນວພັນພືດ, ແນວພັນສັດ, ສູນຜະລິດຢາປົວສັດ, ຂະຫຍາຍລະບົບ ຊົນລະປະທານ ເຊິ່ງມາຮອດປັດຈຸບັນນີ້ ສາມາດເອົານ້ຳເຂົ້ານາໄດ້ 130 ພັນເຮັກຕາ,ເຮັດໃຫ້ເນື້ອທີ່ນາສອງລະດູໄດ້ເພີ່ມຂຶ້ນແຕ່ລະປີ.

ຂະບວນການຫັນເປັນສະຫະກອນກະເສດ ໄດ້ຮັບການປັບປຸງ ແລະ ຂະຫຍາຍຕົວເຊິ່ງຮອດທ້າຍປີ 1985 ຈຳນວນສະຫະກອນກະເສດໃນທົ່ວປະເທດໄດ້ເພີ່ມຂຶ້ນ ເປັນ 3.420 ໜ່ວຍ ກວມ 53% ຂອງຈຳນວນຄອບຄົວຊາວນາ ແລະ 52% ຂອງເນື້ອທີ່ນາທັງໝົດໃນທົ່ວປະເທດ. ໄປພ້ອມໆກັບຂະບວນການຫັນເປັນສະຫະກອນກະເສດ ຂະບວນການເຮັດກະເສດສູນກໍ່ໄດ້ຮັບການຂະຫຍາຍຕົວ, ເຊິ່ງໄດ້ເຮັດໃຫ້ຜະລິດຕະພາບຂອງພືດຊະນິດ ຕ່າງໆເພີ່ມຂຶ້ນເປັນປະຈຳ, ອັນສຳຄັນແມ່ນໄດ້ເຮັດໃຫ້ຜະລິດຕະພາບຂອງເຂົ້ານາປີເພີ່ມຂຶ້ນ ປະມານ 62% ໃນ 5 ປີ.

ດ້ານອຸດສາຫະກຳ: ພວກເຮົາໄດ້ສືບຕໍ່ຟື້ນຟູບັນດາໂຮງງານທີ່ລະບອບເກົ່າປະໄວ້, ກໍ່ສ້າງບັນດາວິສາຫະກິດໃໝ່ຂຶ້ນຕື່ມຈຳນວນໜຶ່ງ, ເຊັ່ນ: ໂຮງງານສ້ອມແປງກົນຈັກ, ບັນດາວິສາຫະກິດຂຸດຄົ້ນແຮ່ກົ່ວ, ຫີນກາວ, ໂຮງງານຫລໍ່ເບຕົງ, ໂຮງງານຜະລິດວັດສະດຸກໍ່ສ້າງ, ໄດ້ຕິດຕັ້ງຈັກປັ່ນໄຟຟ້າໜ່ວຍທີ 5 ຢູ່ເຂື່ອນນ້ຳງື່ມ ແລະ ອື່ນໆ. ຈາກນັ້ນໄດ້ເຮັດໃຫ້ຍອດຜະລິດພັນອຸດສາຫະກຳ ແລະ ຫັດຖະກຳໃນປີ 1985 ທຽບໃສ່ປີ 1980 ເພີ່ມຂຶ້ນ

42%, ໃນນັ້ນການຜະລິດກະແສໄຟຟ້າ ເພີ່ມຂຶ້ນ 3%, ແຮ່ກົ່ວເພີ່ມຂຶ້ນ 25 %, ຫີນກາວ ເພີ່ມ 5 ເທົ່າ, ໄມ້ທ່ອນ ເພີ່ມ 73%, ໄມ້ເລື່ອຍເພີ່ມ 54%, ໄມ້ປູພື້ນເພີ່ມ 2 ເທົ່າ, ດິນຈີ່ ດິນຂໍເພີ່ມ 4 ເທົ່າ, ເກືອເພີ່ມ 4 ເທົ່າ, ສະບູເພີ່ມ 3,7 ເທົ່າ, ຢາປົວພະຍາດ ເພີ່ມຂຶ້ນ 59% .

<u>ດ້ານການກໍ່ສ້າງພື້ນຖານ</u>: ໃນໄລຍະແຜນການ 5 ປີຄັ້ງທີ I ໄດ້ລົງທຶນ ກໍ່ສ້າງ ພື້ນຖານ ເພື່ອຂະຫຍາຍເສດຖະກິດ ແລະ ສັງຄົມທັງໝົດ 18 ຕື້ກີບ, ຄິດສະເລ່ຍເພີ່ມ10% ຕໍ່ປີ. ຄຽງຄູ່ກັນນັ້ນ ກໍ່ໄດ້ເອົາໃຈໃສ່ປັບປຸງ ແລະ ຂະຫຍາຍອົງການ ກໍ່ສ້າງຂອງລັດຢູ່ສູນກາງ ແລະ ທ້ອງຖິ່ນ, ປະກອບພາຫະນະກົນຈັກ, ຂະຫຍາຍພື້ນຖານການຜະລິດວັດຖຸ ກໍ່ສ້າງຈຳນວນໜຶ່ງ, ນັບທັງການກໍ່ສ້າງຖັນແຖວພະນັກງານໃຫ້ແກ່ຂະແໜງການ ດັ່ງກ່າວ. ພ້ອມກັນນັ້ນ ລັດກໍ່ໄດ້ມີແຜນນະໂຍບາຍນຳໃຊ້ບັນດາອົງການຮັບເໝົາ ກໍ່ສ້າງຂອງ ເອກະຊົນ ເຂົ້າໃນການປະຕິບັດແຜນການກໍ່ສ້າງຂອງລັດ.

<u>ດ້ານຄົມມະນາຄົມ, ຂົນສົ່ງ ແລະ ໄປສະນີ</u>: ໃນ 5 ປີທີ່ຜ່ານມາ ໄດ້ຟື້ນຟູຍົກລະດັບ ແລະ ກໍ່ສ້າງທາງໃໝ່ ໄດ້ 844 ກິໂລແມັດ, ປູຢາງໄດ້ 193 ກິໂລແມັດ, ກໍ່ ສ້າງຂົວ ຂະໜາດກາງ ແລະໃຫຍ່ ທີ່ມີລວງຍາວເຖິງ 1.382 ແມັດ, ເຊິ່ງໄດ້ເຮັດໃຫ້ເສັ້ນທາງ ລົດໂອໂຕໄປຮອດປະມານ 80% ຂອງຈຳນວນເມືອງໃນທົ່ວປະເທດ, ບໍລິມາດຈໍລະ ຈອນ ຂົນສົ່ງສິນຄ້າທັງໝົດເພີ່ມຂຶ້ນ 45%, ການຂົນສົ່ງຄົນໂດຍສານເພີ່ມຂຶ້ນ 69% , ລະບົບ ການໂທລະຄົມມະນາຄົມ ແລະ ຕິດຕໍ່ສື່ສານ, ຫ້ອງການໄປສະນີ, ໂທລະສັບ, ໂທລະເລກ ກໍ່ໄດ້ຮັບການກໍ່ສ້າງຂຶ້ນຕື່ມ, ຈຶ່ງເຮັດໃຫ້ການຕິດຕໍ່ສື່ສານຢູ່ພາຍໃນປະເທດກວມເຖິງ 85% ຂອງຈຳນວນເມືອງທັງໝົດແລະເຮັດໃຫ້ການຕິດຕໍ່ກັບຕ່າງປະເທດສະດວກດີຂຶ້ນຕື່ມ .

ດ້ານການຄ້າ: ຕາໜ່າງຮ້ານຄ້າຂອງລັດ ແລະ ສະຫະກອນຊື້ຂາຍໄດ້ຮັບການ ເປີດກວ້າງຢ່າງບໍ່ຢຸດຢັ້ງ, ໄປພ້ອມໆກັບການນຳໃຊ້, ຈຳກັດ, ດັດສ້າງການຄ້າຂອງເອກະຊົນ ຢ່າງຕັ້ງໜ້າ ອັນເຮັດໃຫ້ບໍລິມາດຈໍລະຈອນສິນຄ້າຂອງລັດ ແລະ ຂອງລວມໝູ່ ໃນ 5 ປີ ຜ່ານມາເພີ່ມຂຶ້ນຄົບເທົ່າ ພວກເຮົາກໍ່ເອົາໃຈໃສ່ເພີ່ມທະວີການຂາອອກ ເປັນຕົ້ນ ແມ່ນໄດ້ ພະຍາຍາມຫັນການຄ້າໄປສູ່ທິດຕາເວັນອອກ ເພື່ອຫລຸດພົ້ນອອກຈາກການປິດລ້ອມ ແລະກົດໜີບຈາກຕະຫລາດຕາເວັນຕົກ ມູນຄ່າການຂາອອກ ໃນ 5 ປີຜ່ານມາເພີ່ມຂຶ້ນ 3,2ເທົ່າ, ມູນຄ່າຂາເຂົ້າເພີ່ມ 13%, ຫລຸດລະດັບການຂາດດຸນໃນຕາຊິ່ງການຄ້າຕ່າງປະເທດ ຈາກ 80% ລົງຍັງ 50% .

ດ້ານການເງິນ: ໃນໄລຍະ 5 ປີຜ່ານມາ ວຽກງານການເງິນເວົ້າລວມກໍ່ດີ ງົບປະມານແຫ່ງລັດຂັ້ນຕ່າງໆ ເວົ້າສະເພາະໄດ້ຮັບການປັບປຸງເພີ່ມທະວີຢ່າງຕັ້ງໜ້າ, ທ້ອງຖິ່ນຈຳນວນໜຶ່ງ ບໍ່ພຽງແຕ່ສາມາດດຸ່ນດ່ຽງ ງົບປະມານຂອງຕົນໄດ້, ແຕ່ຫາກຍັງ ປະຕິບັດພັນທະຕໍ່ສູນກາງອີກດ້ວຍ ເຮັດໃຫ້ການແບກຫາບດ້ານການເງິນຂອງສູນກາງຕໍ່ທ້ອງຖິ່ນຫລຸດຜ່ອນລົງ, ແຫລ່ງລາຍຮັບງົບປະມານຂອງລັດໃນ 5 ປີໄດ້ເພີ່ມຂຶ້ນ 11ເທົ່າ ໃນນັ້ນແຫລ່ງລາຍຮັບສ່ວນ ຫລາຍ ແມ່ນມາຈາກ ການຊ່ວຍເຫລືອ ແລະ ການກູ້ຢືມຈາກຕ່າງປະເທດ.

ດ້ານວັດທະນະທຳ-ສັງຄົມ: ຜົນສຳເລັດອັນສຳຄັນຂອງວຽກງານສຶກສາໃນຊຸມປີ ຜ່ານມາ ພວກເຮົາໄດ້ສຳເລັດການລົບລ້າງຄວາມບໍ່ຮູ້ໜັງສື ໃນທົ່ວປະເທດໂດຍພື້ນຖານ. ໃນ 5 ປີທີ່ຜ່ານມາ ຈຳນວນນັກຮຽນສາມັນສຶກສາເພີ່ມຂຶ້ນ 8%, ນັກສຶກສາຊັ້ນສູງແລະຊັ້ນກາງໄດ້ເພີ່ມຂຶ້ນ 58%, ຈຳນວນສະຖາບັນສຶກສາຊັ້ນສູງ ແລະ ທຽບເທົ່າຊັ້ນສູງເພີ່ມຂຶ້ນ ຈາກ 3 ເປັນ 6 ແຫ່ງ, ຈຳນວນໂຮງຮຽນວິຊາສະເພາະຊັ້ນກາງເພີ່ມຈາກ 24 ຂຶ້ນເປັນ 39 ແຫ່ງ, ຈຳນວນໂຮງຮຽນວິຊາຊີບຊັ້ນຕົ້ນເພີ່ມຈາກ 40 ຂຶ້ນເປັນ 87 ແຫ່ງ, ໄດ້ສົ່ງ ນັກສຶກສາໄປກໍ່ສ້າງຢູ່ບັນດາປະເທດສັງຄົມນິຍົມອ້າຍນ້ອງ 5 ພັນ ກວ່າຄົນ.

ໃນວຽກງານສາທາລະນະສຸກ ພວກເຮົາກໍ່ສ້າງໂຮງໝໍໄດ້ຕື່ມອີກຫລາຍແຫ່ງ, ໃນຫຼາຍທ້ອງຖິ່ນໄດ້ມີຂະບວນປູກສ້າງສຸກສາລາຢູ່ຂັ້ນຕາແສງ, ມີຖົງຢາປະຈຳບ້ານ ແລະ ຂະບວນອະນາໄມ 3 ສະອາດໄດ້ຂະຫຍາຍຕົວ. ຈຳນວນແພດຊັ້ນສູງ, ຊັ້ນກາງ, ຊັ້ນຕົ້ນໃນປີ1985 ທຽບໃສ່ປີ 1980 ໄດ້ເພີ່ມຂຶ້ນ 59%.

ເພື່ອຍົກສູງຊີວິດການເປັນຢູ່ທາງດ້ານຈິດໃຈຂອງປະຊາຊົນ ພວກເຮົາໄດ້ກໍ່ສ້າງສະຖານີວິທະຍຸກະຈາຍສຽງ, ສະຖານີໂທລະພາບ ແລະ ບັນດາໂຮງສາຍຮູບເງົາ, ຫໍພິພິດ ຕະພັນ, ຫໍວາງສະແດງ ແລະ ຫໍສະມຸດໃນຫລາຍແຫ່ງ; ໄດ້ພິມຈຳໜ່າຍປຶ້ມ, ໜັງສືພິມ , ວາລະສານ ແລະ ສ້າງຟິມຮູບເງົາໄດ້ຫລາຍກວ່າເກົ່າ ດ້ວຍເນື້ອໃນອຸດົມຮັ່ງມີ ແລະມີຄຸນນະພາບດີກວ່າແຕ່ກ່ອນ.

* ເສດຖະກິດ ຂອງປະເທດເຮົາ ບໍ່ພຽງແຕ່ໄດ້ ຂະຫຍາຍຕົວທາງດ້ານປະລິມານ, ແຕ່ຍັງໄດ້ມີການຫັນປ່ຽນທາງດ້ານຄຸນນະພາບ. ຮອດປີ 1985 ພາກສ່ວນເສດຖະກິດ ສັງຄົມ ໄດ້ກວມອັດຕາສ່ວນເຖິງ 46% ຂອງຍອດຜະລິດພັນສັງຄົມພາຍໃນປະເທດໃນນັ້ນພາກສ່ວນເສດຖະກິດສັງຄົມນິຍົມ ໃນຂະແໜງກະສິກຳກວມ 27%, ອຸດສາຫະກຳ 96%, ຂົນສົ່ງ 60%, ກໍ່ສ້າງພື້ນຖານ 90% ແລະການຄ້າ 35%.

ໃນໄລຍະຜ່ານມາ ພວກເຮົາໄດ້ເລີ່ມປະຕິບັດແຜນນະໂຍບາຍ ວ່າດ້ວຍການ ດັດແປງກົນໄກຄຸ້ມຄອງເສດຖະກິດຢ່າງເປັນລະບົບຄົບຊຸດ ເປັນຕົ້ນແມ່ນໄດ້ດັດແປງນະໂຍບາຍ ລາຄາ, ນະໂຍບາຍເງິນເດືອນ, ປະຕິບັດການແບ່ງຂັ້ນຄຸ້ມຄອງ ລະຫວ່າງສູນກາງ ກັບທ້ອງຖິ່ນຕ່າງໆ ແລະ ໄດ້ຜັນຂະຫຍາຍການເຮັດທົດລອງຫັນລັດວິສາຫະກິດຈຳນວນໜຶ່ງ ໄປ ສູ່ການທຸລະກິດສັງຄົມນິຍົມ ເຊິ່ງຜົນສຳເລັດໃນເບື້ອງຕົ້ນຂອງວຽກງານເຫລົ່ານັ້ນ ໄດ້ຢັ້ງຢືນວ່າ ແຜນນະໂຍບາຍດັ່ງກ່າວຂອງພັກ ແມ່ນຖືກຕ້ອງ ແລະ ມີອະນາຄົດ ອັນດີງາມ. ຜົນສຳເລັດ ຂອງການປະຕິບັດ ແຜນການ 5 ປີ ຄັ້ງທີ I ໄດ້ເຮັດໃຫ້ ໂສມໜ້າ ທາງດ້ານເສດຖະກິດ-ສັງຄົມຂອງປະເທດເຮົາ ມີການຫັນປ່ຽນດີຂຶ້ນກ່ວາເກົ່າ, ມັນໄດ້ສ້າງພື້ນຖານວັດຖຸອັນຈຳເປັນ ເພື່ອກ້າວເຂົ້າສູ່ການປະຕິບັດແຜນການ 5 ປີເທື່ອທີ II ຢ່າງມີໄຊ.

ຢ່າງໃດກໍດີ ຜ່ານພຶດຕິກຳ ພວກເຮົາກໍຍັງມີຄວາມຂາດຕົກບົກພ່ອງຫລາຍປະການ ທີ່ພວມພົ້ນເດັ່ນຂຶ້ນ, ເຊິ່ງໄດ້ຈຳກັດໝາກຜົນແຫ່ງການເຄື່ອນໄຫວຂອງປະຊາຊົນເຮົາບໍ່ໜ້ອຍ.

ໃນການກະສິກຳ ເນື່ອງຈາກວ່າ ບໍ່ທັນເຫັນທີ່ຕັ້ງ ອັນສຳຄັນ ຂອງການກະສິກຳ ໄດ້ໝົດ ດັ່ງນັ້ນ ໃນໄລຍະທີ່ຜ່ານມາ ການລົງທຶນເພື່ອຂະຫຍາຍກຳລັງການຜະລິດ ຂອງ ຂະແໜງການດັ່ງກ່າວ ຈຶ່ງບໍ່ທັນໄດ້ຮັບການເອົາໃຈໃສ່ເທົ່າທີ່ຄວນ ເຊິ່ງສະແດງອອກ ຢູ່ບ່ອນວ່າ: ການລົງທຶນກໍ່ສ້າງພື້ນຖານສຳລັບຂະແໜງກະສິກຳ, ປ່າໄມ້ ແລະ ຊົນລະປະທານ ໃນ 5 ປີທີ່ຜ່ານມາກວມພຽງແຕ່ 18% ຂອງທຶນກໍ່ສ້າງພື້ນຖານທັງໝົດ, ມີຫລາຍ ກິດຈະການຊົນລະປະທານ ຖືກແກ່ຍາວເວລາ ກໍ່ສ້າງຂາດປະສິດທິຜົນ ຍິ່ງໄປກ່ວານັ້ນ ການ ຂະຫຍາຍຕາໜ່າງຊົນລະປະທານ ກໍຍັງບໍ່ທັນຕິດພັນກັບຂະບວນການ ຫັນເປັນສະຫະກອນ ກະເສດ; ຍັງບໍ່ທັນໄດ້ເອົາໃຈໃສ່ຢ່າງພຽງພໍ ຕໍ່ການປຸກລະດົມຂະບວນການເຮັດຝຸ່ນ, ໃສ່ຝຸ່ນ, ແກ້ໄຂບັນຫາແນວພັນແລະດັດແປງເຄື່ອງມືກະເສດໃນໝູ່ມະຫາຊົນ, ຍັງບໍ່ທັນສຸມໃສ່ການກໍ່ສ້າງພະນັກງານ ແລະ ຈັດວາງພະນັກງານໃຫ້ທ້ອງຖິ່ນຕ່າງໆ; ຍັງບໍ່ທັນມີວິທີການຕົວຈິງ ແລະ ຄົບຊຸດເພື່ອລຶດຜ່ອນແລະກ້າວໄປເຖິງຢຸດຕິການຖາງປ່າເຮັດໄຮ່, ການຂຸດຄົ້ນໄມ້ຍັງບໍ່ທັນໄປຄຽງຄູ່ກັບການປຸງແຕ່ງ ແລະ ປູກໄມ້ໃຫ້ເປັນປ່າ. ຂະບວນການຫັນເປັນສະຫະກອນ ກໍ່ໄດ້ຮັບການຊຸກຍູ້ຢ່າງແຂງແຮງ, ມີສະຫະກອນຈຳນວນໜຶ່ງກໍ່ໄດ້ເສີມຂະຫຍາຍທ່າດີຂອງ ແບບວິທີທຳມາຫາກິນລວມໝູ່ ຈັດຕັ້ງການແກ້ໄຂ ຊີວິດການເປັນຢູ່ທາງດ້ານວັດຖຸ ແລະຈິດໃຈໃຫ້ສະມາຊິກ ສະຫະກອນໄດ້ເປັນຢ່າງດີແລະໄດ້ລະດົມໃຫ້ປະຊາຊົນ ເຂົ້າຮ່ວມໃນການ ປົກປັກຮັກສາຄວາມສະຫງົບ ແລະ ຄວາມເປັນລະບຽບຮຽບຮ້ອຍຂອງບ້ານເມືອງ ແຕ່ຈຳ

ມວນສະຫະກອນປະເພດນີ້ ພັດບໍ່ທັນມີຫລາຍ. ສະຫະກອນສ່ວນຫລວງຫລາຍຍັງມີລັກສະນະຮູບການ, ຍັງບໍ່ທັນມີຄຸນປະໂຫຍດຢ່າງຈະແຈ້ງ ໃຫ້ແກ່ການຂະຫຍາຍການຜະລິດແລະແກ້ໄຂຊີວິດການເປັນຢູ່ຂອງປະຊາຊົນ ອັນນີ້ກໍ່ຍ້ອນວ່າ ຄວາມຮັບຮູ້ຂອງພະນັກງານ ຈຳນວນໜຶ່ງໃນຂັ້ນຕ່າງໆ ຕໍ່ບັນຫາກຳມະສິດຍັງບໍ່ທັນຖືກຕ້ອງ, ຍັງມີແນວຄິດອັດຕະວິໄສ, ຟ້າວຟ້າວ, ຢາກສຳເລັດການຫັນເປັນສະຫະກອນໂດຍທັນທີທັນໃດ ດ້ວຍວິທີຫນີບຊາວນາໃຫ້ເຂົ້າສະຫະກອນ ໂດຍບໍ່ທັນເຫັນໄດ້ວ່າຕ້ອງເອົາບັນຫາກຳມະສິດຕິດແຫນ້ນກັບການຂະຫຍາຍຕົວ ຂອງກຳລັງການຜະລິດ, ກັບລະດັບການຄຸ້ມຄອງຂອງພະນັກງານ ແລະລະດັບຄວາມຕື່ນຕົວ ຂອງຊາວໄຮ່ນາ.

ໃນອຸດສາຫະກຳ ຄວາມຂາດຕົກບົກພ່ອງທີ່ພົ້ນເດັ່ນນັ້ນແມ່ນຍັງເບົາເບົາການຂະຫຍາຍຫັດຖະກຳ, ອຸດສາຫະກຳນ້ອຍ ແລະການປຸງແຕ່ງຜະລິດຕະພັນກະສິກຳ-ປ່າໄມ້, ການຜະລິດເຄື່ອງໄມ້ເຄື່ອງມື ແລະສິນຄ້າໃຊ້ສອຍບາງປະເພດ ທີ່ພວກເຮົາຍັງມີຄວາມສາມາດຜະລິດເອົາເອງໄດ້ ໂດຍບໍ່ຈຳເປັນຕ້ອງຊື້ມາຈາກຕ່າງປະເທດ. ພ້ອມກັນນັ້ນມີຫລາຍວິສາຫະກິດກໍ່ຍັງນຳໃຊ້ບໍ່ທັນຫມົດຄວາມສາມາດຜະລິດຂອງຕົນ, ການຄຸ້ມຄອງພັດຍັງມີລັກສະນະອາດ ຍາສິດບໍລິຫານເກືອກູນ, ຍັງບໍ່ທັນໄປສູ່ການທຸລະກິດຢ່າງຂາດຕົວ ຈຶ່ງເຮັດໃຫ້ຜະລິດ ຕະພາບຂອງວຽກງານກໍ່ຍັງບໍ່ທັນສູງ, ຄຸນນະພາບຂອງການຜະລິດຕະພັນກໍ່ຍັງບໍ່ທັນດີ ແລະ ປະສິດທິຜົນເສດຖະກິດກໍ່ຍັງມີຫນ້ອຍ .

ບັນຫາຄົມມະນາຄົມຂົນສົ່ງ ກໍ່ຍັງມີຄວາມສາມາດຈະແກ້ໄຂໄດ້ດີກວ່ານີ້ ຖ້າວ່າທ້ອງຖິ່ນຕ່າງໆຫາກຮູ້ປຸກລະດົມປະຊາຊົນເຮັດຕາມທິດນຳທີ່ວ່າ ລັດແລະປະຊາຊົນພ້ອມກັນເຮັດ ຫົນທາງ, ປັບປຸງປົວແປງເສັ້ນທາງໃຫຍ່ ແລະ ຮູ້ນຳໃຊ້ພາຫະນະຂົນສົ່ງແບບປະຖົມ ປະຖານບໍ່ແມ່ນຈະລໍຖ້າເອົາແຕ່ພາຫະນະຂົນສົ່ງອັນທັນສະໄຫມ.

ຕາຫນ່າງການຄ້າຂອງລັດ ແລະ ລວມຫມູ່ຍັງເບົາບາງຫລາຍ, ຫລາຍທ້ອງຖິ່ນບໍ່ທັນ ມີຕະຫລາດ, ການເຄື່ອນໄຫວຂອງການຈັດຕັ້ງການຄ້າ ສ່ວນຫລາຍຍັງຂາດໄຫວພິບ, ຍັງມີລັກສະນະບໍລິຫານ, ບໍ່ທັນສອດຄ່ອງກັບພາລະບົດບາດທຸລະກິດ ຮັບໃຊ້ຊີວິດການເປັນຢູ່ແລະຊຸກຍູ້ການຜະລິດຂອງຕົນ. ດ້ວຍເຫດນັ້ນຄຸນປະໂຫຍດໃນການນຳພາຕໍ່ສູ້, ດັດສ້າງການຄ້າເອກະຊົນ ຈຶ່ງຍັງຖືກຈຳກັດ; ການຈັດຕັ້ງການເກັບຊື້ສິນຄ້າ ເພື່ອເພີ່ມແຫລ່ງຂາອອກກໍ່ຍັງເຮັດບໍ່ທັນໄດ້ດີ ແລະ ການຄຸ້ມຄອງສິນຄ້າຂາເຂົ້າຈາກຕະຫລາດທີ່ນິຍົມກໍ່ບໍ່ທັນເຄັ່ງຄັດ, ການນຳໃຊ້ເງິນຕາກໍ່ບໍ່ທັນສົມເຫດສົມຜົນ .

ເບິ່ງລວມແລ້ວ ໃນ 5 ປີທີ່ຜ່ານມາ ພວກເຮົາກໍໄດ້ມີຄວາມກ້າວໜ້າ ຫລາຍປະການທີ່ສຳຄັນ ໃນການພາປະເທດຊາດຂອງຕົນ ກ້າວຂຶ້ນຕາມເສັ້ນທາງສັງຄົມນິຍົມ.ບັນດາໜ້າທີ່ ແລະ ຈຸດໝາຍຕົ້ນຕໍທີ່ກອງປະຊຸມໃຫຍ່ຄັ້ງທີ III ຂອງພັກໄດ້ວາງອອກໃນໄລຍະ1981-1985 ນັ້ນກໍໄດ້ຮັບການປະຕິບັດ. ແຕ່ເຖິງພຽງນັ້ນກໍຕາມ ການສັງເກດຂອງກອງປະຊຸມໃຫຍ່ຄັ້ງທີ II ແລະ ຄັ້ງທີ III ຂອງພັກ ລະດັບເສດຖະກິດຂອງປະເທດເຮົາ ມາຮອດປັດຈຸບັນນີ້ກໍຍັງດ້ອຍພັດທະນາ. ພວກເຮົາຕ້ອງໃຊ້ເວລາສູ້ຊົນອີກຫລາຍປີ ຈຶ່ງຈະເຮັດໃຫ້ ສະພາວະຄວາມເປັນຈິງດັ່ງກ່າວນັ້ນປ່ຽນແປງໄດ້ .

ບັນດາຜົນງານການຂະຫຍາຍເສດຖະກິດສັງຄົມ ໃນຊຸມປີທີ່ຜ່ານມາແມ່ນໝາກຜົນຂອງການບາກບັ່ນບຸກບືນອອກແຮງງານຂອງປະຊາຊົນເຮົາຢູ່ພາຍໃຕ້ຄົນຫຼຸງຂອງພັກ ສົມທົບ ກັບການຊ່ວຍເຫລືອຂອງສາກົນ, ກ່ອນອື່ນໝົດແມ່ນສະຫະພາບໂຊວຽດ,ຫວຽດນາມ, ກຳປູເຈຍ ແລະ ບັນດາປະເທດສັງຄົມນິຍົມອື່ນໆ...ໄຊຊະນະດັ່ງກ່າວນັ້ນ ໄດ້ເປັນສິ່ງປຸກ ລະດົມກຳລັງໃຈຂອງປະຊາຊົນເຮົາໃຫ້ຕັ້ງໜ້າສືບຕໍ່ກ້າວຂຶ້ນ ຕາມເສັ້ນທາງຂອງພັກ ປະຕິບັດທິດທາງໜ້າທີ່ຂອງແຜນການ 5 ປີຄັ້ງທີ II ສຳເລັດຜົນຢ່າງມີໄຊ .

# ພາກທີສອງ

## ທິດທາງ, ໜ້າທີ່ ຂອງແຜນການພັດທະນາເສດຖະກິດ-ສັງຄົມ

## ໃນລຸ່ມປີ 1986-1990.

ເພື່ອປະຕິບັດທິດທາງຍຸດທະສາດ ເສດຖະກິດໄລຍະຍາວຂອງພັກ ທີ່ໄດ້ກຳນົດໄວ້ ໃນບົດລາຍງານການເມືອງນັ້ນ ແຜນການ 5 ປີຄັ້ງທີສອງ (1986-1990) ຕ້ອງແມ່ນແຜນການຂະຫຍາຍການຜະລິດ, ກໍ່ສ້າງໂຄງປະກອບເສດຖະກິດໃໝ່ທີ່ກ້າວໜ້າ ເພື່ອ ແນໃສ່ຂະຫຍາຍເສດຖະກິດສັງຄົມຢ່າງຮອບດ້ານ, ໜັກແໜ້ນ, ສ້າງປະຖົມປັດໄຈ ອັນຈຳເປັນເພື່ອລະກ້າວ ໃຫ້ແກ່ການຫັນເປັນອຸດສາຫະກຳສັງຄົມນິຍົມໃນໄລຍະຕໍ່ໄປ. ຈາກນັ້ນ ທິດທາງ ແລະ ໜ້າທີ່ຕົ້ນຕໍຂອງມັນມີດັ່ງນີ້ :

1)- ຮັບປະກັນແກ້ໄຂດ້ານທັນຍາຫານ ແລະ ອາຫານໃຫ້ໄດ້ໂດຍພື້ນຖານ .

2)- ຂະຫຍາຍວິຊາຊີບປ່າໄມ້ຢ່າງຮອບດ້ານ, ຈຳກັດ ແລະ ໄປເຖິງບ່ອນ ຢຸດຕິການ

ຖາງປ່າເຮັດໄຮ່ ໂດຍພົ້ນຖານ.

3)- ກໍ່ສ້າງຊຸດສາຫະກຳ ແລະ ຫັດຖະກຳ, ສ້າງໂຄງປະກອບກະສິກຳ-ປ່າໄມ້ ອຸດສາຫະກຳ ຢ່າງສົມເຫດສົມຜົນ ໃຫ້ໄດ້ໃນເບື້ອງຕົ້ນ.

4)- ປະຕິບັດການແບ່ງເຂດເສດຖະກິດ, ຂົ້ນແຜນກຳນົດກໍ່ສ້າງຊົນນະບົດ ແລະ ຕົວເມືອງ, ນຳໃຊ້ແຫລ່ງຊັບພະຍາກອນຢ່າງມີປະສິດທິຜົນ.

5)- ຂະຫຍາຍການຄົມມະນາຄົມ, ຂົນສົ່ງ, ໄປສະນີ ແລະ ຕາໜ່າງຕິດຕໍ່ ສື່ສານຢ່າງແຂງແຮງ.

6)-ເປີດກ້ວາງຕາໜ່າງການຄ້າ,ຊຸກຍູ້ວຽກງານຈໍລະຈອນສິນຄ້າຢ່າງແຂງແຮງ ປະກອບສ່ວນຢ່າງຕັ້ງໜ້າ ເຂົ້າໃນການຊຸກຍູ້ການຜະລິດ, ປົວແປງຊີວິດການເປັນຢູ່.

7)- ປັບປຸງ ແລະ ເພີ່ມທະວີບົດບາດເປັນເຈົ້າພາຫຼາງຂອງພາກສ່ວນເສດຖະ ກິດຂອງລັດ, ຂະຫຍາຍເສດຖະກິດລວມໝູ່, ຈຳກັດດ້ານຫຍໍ້ທໍ້ຂອງພາກສ່ວນເສດຖະກິດ ເອກະຊົນ ລົງເທື່ອລະກ້າວ.

8)- ອອກແຮງປັບປຸງການເງິນແຫ່ງຊາດ ໃຫ້ມີຄວາມສະຫງົບປົກກະຕິ .

9)- ຂະຫຍາຍສຶກສາ ແລະຍົກຄຸນນະພາບຂອງການສຶກສາ, ການກໍ່ສ້າງພະນັກງານ,ຂະຫຍາຍສາທາລະນະສຸກ, ວັດທະນະທຳ, ກິລາກາຍຍະກຳ ແລະສະຫວັດດີການສັງຄົມ.

10)- ນຳໃຊ້ຄວາມກ້າວໜ້າທາງດ້ານວິທະຍາສາດ-ເຕັກນິກ, ຈັດຕັ້ງວຽກງານສຳຫລວດພົ້ນຖານຢ່າງຕັ້ງໜ້າ.

11)- ເປີດກ້ວາງການພົວພັນເສດຖະກິດ, ວັດທະນະທຳກັບຕ່າງປະເທດ, ກ່ອນອື່ນແມ່ນການຮ່ວມມືຢ່າງຮອບດ້ານກັບສະຫະພາບໂຊວຽດ, ຫວຽດນາມ, ກຳປູເຈຍ ແລະບັນດາປະເທດສັງຄົມນິຍົມອ້າຍນ້ອງອື່ນໆ .

ເພື່ອປະຕິບັດຈຸດໝາຍ, ທິດທາງ, ໜ້າທີ່ຂອງແຜນການ 5 ປີຄັ້ງທີສອງນີ້ ມັນເລັ່ງທວງໃຫ້ພວກເຮົາຕັ້ງໜ້າສືບຕໍ່ຂະຫຍາຍຈິດໃຈເພິ່ງຕົນເອງ, ສ້າງຄວາມເຂັ້ມແຂງ ດ້ວຍຕົນເອງ; ປະຕິບັດທິດນຳທີ່ວ່າ ສູນກາງກັບທ້ອງຖິ່ນພ້ອມກັນເຮັດ, ລັດກັບປະຊາຊົນ ພ້ອມກັນເຮັດ, ພ້ອມກັນນັ້ນ ກໍ່ສືບຕໍ່ຍາດແຍ່ງການຊ່ວຍເຫລືອຂອງສາກົນ.

ໃນແຜນການ 5 ປີຄັ້ງທີສອງນີ້, ການຄາດຄະເນ ຍອດຜະລິດຕະພັນ ສັງຄົມພາຍໃນປະເທດ ສະເລ່ຍ ແຕ່ລະປີ ຈະເພີ່ມຂຶ້ນ 10 % , ລາຍໄດ້ ແຫ່ງຊາດ ພາຍໃນ ປະເທດຈະເພີ່ມຂຶ້ນ ຄິດສະເລ່ຍແຕ່ລະປີ 9 % .

ຄາດຄະເນໂຄງປະກອບລົງສະສົມປະມານ 25% ແລະ ລົງໃຊ້ສອຍປະມານ 75 % ຂອງລາຍໄດ້ແຫ່ງຊາດທັງໝົດ.

ການລົງທຶນກໍ່ສ້າງພື້ນຖານໃນແຜນການ 5 ປີຄັ້ງທີສອງ ຈະເພີ່ມຂຶ້ນ 57% ທຽບໃສ່ໄລຍະ 5 ປີຄັ້ງທີໜຶ່ງ. ອີງຕາມທິດທາງການພັດທະນາເສດຖະກິດ-ສັງຄົມໃນຊຸມປີ1986 ເຖິງ 1990 ແລະ ບາງບົດຮຽນທີ່ຖອດຖອນໄດ້ໃນຊຸມປີຜ່ານມານີ້ ຄາດຄະເນ ການຈັດວາງໂຄງປະກອບຂອງທຶນກໍ່ສ້າງພື້ນຖານ ໄດ້ດັ່ງນີ້ :

- ຂັ້ນດາຂະແໜງຜະລິດວັດຖຸ : 79 %

ໃນນັ້ນ: + ກະສິກຳ ( ລວມທັງຊົນລະປະທານ ) 20 %

+ ປ່າໄມ້ (ລວມທັງອຸດສາຫະກຳຂຸດຄົ້ນ ແລະປູງແຕ່ງໄມ້ ) 10 % .

+ ອຸດສາຫະກຳ ( ລວມທັງຫັດຖະກຳ ) 15 % .

+ ກໍ່ສ້າງ 5% .

+ ຄົມມະນາຄົມ ຂົນສົ່ງ-ໄປສະນີ 20 % .

+ ການຄ້າ 4 %

+ ຂັ້ນດາຂະແໜງເສດຖະກິດອື່ນໆ 5 %

- ຂັ້ນດາຂະແໜງບໍ່ຜະລິດ: 21 %

ໃນນັ້ນ:+ ສຶກສາ, ວິທະຍາສາດ 8 %

+ ສາທາລະນະສຸກ 5 %

+ ວັດທະນະທຳ - ສັງຄົມ 3 %

+ ເຮືອນຢູ່, ສຳນັກງານ 5 %

ຄາດຄະເນບໍລິມາດທຶນກໍ່ສ້າງພື້ນຖານຂອງຂັ້ນດາທ້ອງຖິ່ນປະມານ 40-50% ຂອງທຶນກໍ່ສ້າງພື້ນຖານທັງໝົດ, ທຶນກໍ່ສ້າງພື້ນຖານດັ່ງກ່າວ ຕົ້ນຕໍແມ່ນລົງໃສ່ການກໍ່ສ້າງ ກິດຈະການໃໝ່, ສ່ວນການບູລະນະ ຫລືເປີດກວ້າງຂັ້ນດາວິສາຫະກິດນັ້ນ, ຕົ້ນຕໍແມ່ນອີງໃສ່ທຶນຂອງວິສາຫະກິດເອງ ແລະສິນເຊື່ອ ຂອງທະນາຄານ.

ເພື່ອຮັບປະກັນໃຫ້ແກ່ການລົງທຶນກໍ່ສ້າງພື້ນຖານ ຢ່າງມີປະສິດທິຜົນນັ້ນ ແຜນການ ລົງທຶນຕ້ອງຄົບຊຸດ, ມີຈຸດສຸມ, ເຮັດໃຫ້ແລ້ວຢ່າງຂາດຕົວ; ຕ້ອງຫລີກເວັ້ນສະພາວະການກະແຈກກະຈາຍ ແລະ ບໍ່ຄົບຊຸດ.

ບົນພື້ນຖານກຳລັງການຜະລິດທີ່ມີໃນປັດຈຸບັນ ທິດທາງ ແລະ ໜ້າທີ່ຂະຫຍາຍເສດຖະ

ກິດ, ສັງຄົມ ຮອດປີ 2000 ແລະແຜນການ 5 ປີທີໄດ້ຍົກຂຶ້ນໃນລາຍງານການເມືອງນັ້ນ ທິດທາງ, ໜ້າທີ່ ລະອຽດຂອງບັນດາຂະແໜງການເສດຖະກິດ, ວັດທະນະທຳມີດັ່ງນີ້ :

1). <u>ດ້ານກະສິກຳ-ປ່າໄມ້:</u> ຂະຫຍາຍຂະແໜງກະສິກຳຢ່າງຮອບດ້ານ ແລະ ແຂງແຮງ ເພື່ອແນໃສ່ປະຕິບັດໃຫ້ໄດ້ 3 ໜ້າທີໃຫຍ່: ຮັບປະກັນຄວາມຕ້ອງການ ທາງດ້ານ ທັນຍາຫານ ແລະ ມີສ່ວນແຮໄວ້, ຕອບສະໜອງຄວາມຕ້ອງການດ້ານວັດຖຸ ດິບໃຫ້ແກ່ອຸດສາຫະກຳປຸງແຕ່ງ, ສ້າງແຫລ່ງສິນຄ້າມາຈາກການຜະລິດກະສິກຳ, ປ່າໄມ້ເພື່ອເປັນສິນຄ້າຂາອອກຢ່າງໜັກແໜ້ນ.

ດ້ານການປູກຝັງ, ທິດຕົ້ນຕໍຍັງແມ່ນສຸມໃສ່ພືດທັນຍາຫານ, ພ້ອມກັນນັ້ນຕ້ອງ ຕັ້ງໜ້າເປີດກ້ວາງເນື້ອທີ່ປູກພືດອຸດສາຫະກຳ, ຄາດຄະເນຮອດປີ 1990 ຜົນຜະລິດ ທັນຍາຫານຈະເພີ່ມຂຶ້ນ 40-45% ສົມທຽບໃສ່ປີ 1985 ແລະຈະບັນລຸໄດ້ 2-2,2ລ້ານໂຕນ ໃນນັ້ນເຂົ້າເປືອກ 1,7-1,8 ລ້ານໂຕນ ສົມທຽບໃສ່ປີ 1985 ເພີ່ມຂຶ້ນ 29%, ສະເລ່ຍເຂົ້າເປືອກໃສ່ຫົວຄົນໄດ້ 430 ກິໂລ ເພີ່ມຂຶ້ນ 10% ທຽບໃສ່ 1985 .

ກ່ຽວກັບພືດອຸດສາຫະກຳ, ຈະເລັ່ງໃສ່ຂະຫຍາຍພືດຊະນິດທີ່ມີລຸນຄ່າສູງສຳລັບ ຂາອອກແລະຮັບໃຊ້ໃຫ້ແກ່ອຸດສາຫະກຳປຸງແຕ່ງຢູ່ພາຍໃນປະເທດ ເຊັ່ນ:ກາເຟ,ໝາກແໜ່ງ,ໃບຢາສູບ, ຊາ, ອ້ອຍ, ຖົ່ວຂຽວ, ຖົ່ວເຫລືອງ,ຕົ້ນໄມ້ທີໃຫ້ນ້ຳມັນ,ຕົ້ນໄມ້ ໃຫ້ໄຍ , ຄັ່ງ, ຢາງ,ຕົ້ນໄມ້ທີເປັນຢາອື່ນໆ. ຮອດປີ 1990 ຄາດຄະເນຜົນຜະລິດພືດອຸດສາຫະກຳ ຈຳນວນໜຶ່ງຈະເພີ່ມຂຶ້ນເຊັ່ນ: ກາເຟ 70%, ຖົ່ວຂຽວ 3 ເທົ່າ , ຖົ່ວເຫລືອງ 3 ເທົ່າ , ໃບຢາສູບ 4,4 ເທົ່າ , ຖົ່ວດິນ 90%. ຄາດຄະເນຍອດມູນຄ່າຂະແໜງປູກຝັງ ຮອດປີ 1990 ຈະເພີ່ມຂຶ້ນ 70% ທຽບໃສ່ປີ 1985 .

ຂະແໜງລ້ຽງສັດ ກໍ່ຈະຂະຫຍາຍຕົວຢ່າງແຂງແຮງ, ຮອດປີ 1990 ຄວາຍ,ງົວຈະເພີ່ມຂຶ້ນ 27%, ຈຳນວນໝູຈະເພີ່ມຂຶ້ນ 36%, ສັດປີກເພີ່ມຂຶ້ນ 50%.ມູນຄ່າຍອດຜະລິດພັນການລ້ຽງສັດໃນແຜນການ 5 ປີຄັ້ງທີສອງຈະເພີ່ມຂຶ້ນ 40% ສົມທຽບປີ 1985 .

ດ້ວຍຈັງຫວະການຂະຫຍາຍຕົວຂອງຂະແໜງປູກຝັງ ແລະ ລ້ຽງສັດ ຮອດປີ 1990 ມູນຄ່າລວມຍອດຂອງຂະແໜງກະສິກຳ ຈະເພີ່ມຂຶ້ນ 60% ທຽບໃສ່ປີ 1985 ສະເລ່ຍແຕ່ລະປີ ເພີ່ມຂຶ້ນ 9,8 %.

ເພື່ອບັນລຸຈັງຫວະການຂະຫຍາຍຕົວດັ່ງກ່າວ ຕ້ອງມີຄວາມພະຍາຍາມ ແລະ ທັນປ່ຽນໃນຫລາຍດ້ານ ກ່ອນອື່ນໝົດ ຕ້ອງຊຸກຍູ້ການເຮັດກະເສດສຸມ, ເພີ່ມລະດູ, ນຳໃຊ້ ແນວ

ພັນທີ່ມີສະມັດຕະພາບສູງ ສອດຄ່ອງກັບເງື່ອນໄຂດິນຟ້າອາກາດແຕ່ລະບໍລິເວນ, ຕ້ອງເອົາໃຈໃສ່ວຽກງານຊົນລະປະທານ, ສ້າງເຫມືອງຝາຍລະບາຍນ້ຳເຂົ້າໃສ່ນາ, ນຳໃຊ້ ຄວາມອາດສາມາດຂອງລະບົບຊົນລະປະທານທີ່ມີແລ້ວໃຫ້ຫມົດຈຸດປະໂຫຍດ, ພ້ອມກັນນັ້ນ ຕ້ອງກໍ່ສ້າງກິດຈະການຊົນລະປະທານໃຫມ່ຕື່ມ ຕາມທິດນຳທີ່ວ່າ ສ້າງອັນຂະຫນາດນ້ອຍແລະ ຂະຫນາດກາງເປັນຕົ້ນຕໍ ແລະນຳເຂົ້າສູ່ການຜະລິດໂດຍໄວ, ຄາດຄະເນຮອດປີ 1990 ຈະນຳໃຊ້ເນື້ອທີ່ ເຊິ່ງສາມາດຮັບນ້ຳໃນລະດູແລ້ງ ເພີ່ມຂຶ້ນ 3 ເທົ່າທຽບໃສ່ປີ 1985.

ດ້ານການລ້ຽງສັດ ຈະຕ້ອງເອົາໃຈໃສ່ກໍ່ສ້າງສູນທົດລອງຜະລິດພັນສັດ ທີ່ໃຫ້ຜະລິດຕະພາບສູງ ໂດຍສົມທົບພັນພື້ນເມືອງ ກັບ ພັນຈາກຕ່າງປະເທດ ພ້ອມນັ້ນ ກໍ່ຕ້ອງຮັບ ປະກັນອາຫານໃຫ້ແກ່ສັດ, ໂດຍການປັບປຸງທົ່ງຫຍ້າຄືນໃຫມ່, ຈັດຕັ້ງການເກັບມ້ຽນຮັກສາ ຫຍ້າແຮໄວ້ໃຫ້ສັດກິນໃນຍາມແລ້ງ, ຮັບປະກັນສະຫນອງວັດຖຸດິບສຳລັບປ້ອນໂຮງງານອາຫານສັດ, ປັບປຸງໂຮງງານຜະລິດຢາປົວສັດ, ຂະຫຍາຍຕາຫນ່າງສັດຕະວະແພດລົງເຖິງຮາກຖານ .

ການຂະຫຍາຍວຽກງານປູກຝັງ ແລະລ້ຽງສັດ ຕ້ອງອີງໃສ່ປະຊາຊົນເປັນຕົ້ນຕໍ, ຕ້ອງມີແຜນການແລະນະໂຍບາຍຊ່ອຍເຫຼືອຊາວນາ ສ່ວນລັດຕ້ອງຮຸ່ມໃສ່ບັນດາກິດຈະການ ທີ່ຈຳເປັນໃຫ້ແກ່ການຂະຫຍາຍວຽກງານປູກຝັງ ແລະ ລ້ຽງສັດ ເຊັ່ນ: ການກໍ່ສ້າງ ສູນຜະລິດເມັດພັນ, ສູນຜະລິດພັນສັດ, ຜະລິດຢາປົວສັດ, ພື້ນຖານການຜະລິດອາຫານສັດ, ບຸກເບີກເນື້ອທີ່ໃຫມ່, ຕ້ອງເອົາໃຈໃສ່ສົ່ງເສີມ ແລະ ຊ່ວຍເຫລືອເສດຖະກິດຂອງຄອບຄົວຢ່າງຕັ້ງຫນ້າ.

ການປູກຝັງ ແລະລ້ຽງສັດ ຕ້ອງເລືງໃສ່ບໍລິເວນທີ່ມີເງື່ອນໄຂສະດວກ ສະເພາະ ພືດພັນທັນຍາຫານນັ້ນ ນອກຈາກຈຸດສຸມປູກເຂົ້າທີ່ໄດ້ກຳນົດໄວ້ແລ້ວນັ້ນ ຍັງຕ້ອງເອົາ ໃຈໃສ່ເຂດຍຸດທະສາດອີກ ເພື່ອຮັບປະກັນແກ້ໄຂທັນຍາຫານ ແລະ ອາຫານຢູ່ກັບທີ່ .

ກະຊວງກະສິກຳປ່າໄມ້ ຊົນລະປະທານ ແລະ ສະຫະກອນກະເສດ ຕ້ອງເອົາໃຈໃສ່ຊີ້ນຳບັນດາແຂວງຕ່າງໆ ກຳນົດພື້ນທີ່ການຂະຫຍາຍຕົ້ນໄມ້ອຸດສາຫະກຳ ແລະ ການລ້ຽງສັດຕາມຈຸດພິເສດຂອງແຕ່ລະເຂດ, ປັບປຸງ ແລະ ຂະຫຍາຍບັນດາຫນ່ວຍສະຫະກອນກະເສດໃຫ້ຖືກກັບທິດທາງຂອງພັກ, ອີງໃສ່ຄຳສັ່ງແນະນຳຂອງສູນກາງ ສົມທົບກັບບົດຮຽນຂອງບັນດາຫນ່ວຍສະຫະກອນ ທີ່ນຳຫນ້າ ເພື່ອເປັນທິດນຳໃຫ້ແກ່ການປັບປຸງ ແລະ ກໍ່ສ້າງ ບັນດາຫນ່ວຍສະຫະກອນຕ່າງໆ .

ຂະແຫນງການຄ້າ ຕ້ອງເຮັດຫນ້າທີ່ເກັບຊື້ຜົນຜະລິດກະສິກຳ ແລະ ສະຫນອງ ສິນຄ້າ

ອັນຈຳເປັນໃຫ້ແກ່ການພະລິດ ແລະ ຊີວິດການເປັນຢູ່ ເພື່ອຊຸກຍູ້ການພະລິດຂອງຊາວ ນາ ໃຫ້ຂະຫຍາຍຕົວ, ບໍ່ຄວນປະປ່ອຍ ໃຫ້ຊາວນາຫາກ ພະລິດສິນຄ້າໄດ້ແລ້ວ ລັດຈຶ່ງຈັດຕັ້ງ ຕາ ໜ່າງເກັບຊື້, ຕ້ອງອີງໃສ່ຄວາມສາມາດຂອງແຕ່ລະທ້ອງຖິ່ນ ເພື່ອເຊັນສັນຍາຜູກພັນເກັບຊື້ກັບ ຊາວນາກ່ອນ ທັງນີ້ກໍ່ເພື່ອເຮັດໃຫ້ຊາວນາອຸ່ນອຽນຕໍ່ການຂະຫຍາຍການພະລິດຂອງຕົນ. ມີ ແຕ່ເຮັດແນວນັ້ນ ການຄ້າຈຶ່ງຈະປະກອບສ່ວນເຂົ້າໃນການຊຸກຍູ້ການພະລິດແລະທັນການພະ ລິດໃຫ້ຂະຫຍາຍຕົວໄປຕາມແຜນການຢ່າງຖືກຕ້ອງ .

<u>ກ່ຽວກັບການປ່າໄມ້</u>: ປ່າໄມ້ ແມ່ນແຫລ່ງຊັບພະຍາກອນ ທີ່ອຸດົມຮັ່ງມີຂອງຊາດ ແລະ ຕິດພັນໂດຍກົງກັບສະພາບແວດລ້ອມ ແລະ ຊີວິດຂອງປະຊາຊົນ. ສະນັ້ນ ຂະແໜງປ່າໄມ້ ຕ້ອງມີແຜນການຂຸດຄົ້ນຊັບພະຍາກອນປ່າໄມ້ຢ່າງສົມເຫດສົມຜົນ, ເອົາໃຈໃສ່ຟື້ນຟູປ່າແລະ ປົກປັກຮັກສາປ່າໄມ້ບໍ່ໃຫ້ຖືກທຳລາຍ.

ເພື່ອຮັບປະກັນຄວາມຕ້ອງການໄມ້ໃຫ້ແກ່ການໃຊ້ສອຍຢູ່ໃນປະເທດ ແລະ ເປັນສິນຄ້າ ຂາອອກນັ້ນ ຕ້ອງຊຸກຍູ້ວຽກງານຂຸດຄົ້ນ ແລະ ປຸງແຕ່ງໄມ້. ຄາດຄະເນຮອດປີ 1990ພົນ ພະລິດໄມ້ທ່ອນຈະບັນລຸ 5 ແສນແມັດກ້ອນ, ເພີ່ມຂຶ້ນ 2 ເທົ່າ ສົມທຽບໃສ່ປີ 1985,ໄມ້ ເລື່ອຍເພີ່ມຂຶ້ນ 18%, ໄມ້ອັດເພີ່ມຂຶ້ນ 75%, ໄມ້ປູພື້ນເພີ່ມຂຶ້ນ 2,5 ເທົ່າ...

ການຂຸດຄົ້ນໄມ້ ຕ້ອງຮັບປະກັນບໍ່ໃຫ້ທຳລາຍປ່າໄມ້, ບໍ່ໃຫ້ມີຜົນສະທ້ອນເຖິງການ ສົມ ສ່ວນທາງດ້ານຊີວະວິທະຍາປ່າໄມ້ ແລະ ເຂດປ່າທີ່ມີຄຸນປະໂຫຍດຮັກສາແຫລ່ງນ້ຳ,ຕ້ອງມີ ວິທີການທີ່ເໝາະສົມ, ໂດຍຜ່ານຂອດເຕັກນິກປຸງແຕ່ງໄມ້ ເພື່ອນຳໃຊ້ໄມ້ໃຫ້ໝົດຄຸນ ປະ ໂຫຍດ ແລະ ຈຳກັດການໃຊ້ໄມ້ຢ່າງຟຸ່ມເຟືອຍ.

ໃນປ່າໄມ້ຍັງປະກອບດ້ວຍເຄື່ອງປ່າຂອງດົງຫລາຍຊະນິດ ທີ່ມີຄຸນຄ່າແພງເຊັ່ນ:ໝາກ ແໜ່ງ, ຄັ່ງ, ຍາງ, ພືດເປັນຢາ ແລະອື່ນໆ ດັ່ງນັ້ນຕ້ອງສຸມໃສ່ຈັດຕັ້ງປູກຕົ້ນໄມ້ຊະ ນິດ ດັ່ງກ່າວຢ່າງມີແຜນການ ບໍ່ລໍຖ້າໃຫ້ມັນເກີດຂຶ້ນເອງ ແລ້ວຈຶ່ງເກັບເອົາແບບທຳມະຊາດ ຄື ດັ່ງທີ່ເຄີຍເຮັດຜ່ານມາ.

ຕ້ອງຂື້ນແຜນກຳນົດ ແລະ ສ້າງແຜນການປູກ, ຂຸດຄົ້ນ ແລະ ປົກປັກຮັກສາປ່າໄມ້ , ຈັດຕັ້ງສ້າງສູນກ້າເບັ້ຽໄມ້ ທີ່ມີຄຸນຄ່າສູງທາງດ້ານເສດຖະກິດ, ຕ້ອງມີມາດຕະການລົບລຸດ ເພື່ອຕ້ານໄຟໄໝ້ປ່າ ແລະ ການຖາງປ່າເຮັດໄຮ່ຢ່າງຊະຊາຍ ສູ້ຊົນຮອດປີ 1990 ຈະ ລົດຜ່ອນເນື້ອທີ່ໄຮ່ລົງ 30% ສົມທຽບໃສ່ປີ 1985 .

ໃນການປູກແລະປົກປັກຮັກສາປ່າໄມ້,ດ້ານໜື່ງຕ້ອງອີງໃສ່ການຈັດຕັ້ງໃຫ້ຖືກຕ້ອງຕາມ

ຫລັກວິຊາສະເພາະ,ດ້ານໜຶ່ງອີກ ກໍ່ຕ້ອງອີງໃສ່ກຳລັງຂອງປະຊາຊົນຕ້ອງມອບປ່າໄມ້ແລະດິນປ່າໄມ້ໃຫ້ບ້ານແລະບັນດາສະຫະກອນຮັບຜິດຊອບ ທັງເຮັດພັນທະປົກປັກ ຮັກສາ ປ່າໄມ້ຕາມລະບຽບການຂອງລັດ ພ້ອມກັນນັ້ນກໍ່ມີສິດໄດ້ຮັບຜົນປະໂຫຍດໃນການເກັບກ່ຽວ ເຄືອງປ່າຂອງນາປູ່ເຂດປ່າໄມ້ ແລະຕອນດິນທີ່ໄດ້ມອບໝາຍໃຫ້.

ກະຊວງກະສິກຳ-ປ່າໄມ້, ຈັນລະປະທານ ແລະ ສະຫະກອນກະເສດ ຕ້ອງ ຄົ້ນຄ້ວາສະເໜີສະພາລັດຖະມົນຕີ ພິຈາລະນາໂຄງການຕົ້ນຕໍດັ່ງນີ້:

- ໂຄງການທັນຍາຫານ ແລະ ອາຫານ.

- ໂຄງການຈຳກັດ ແລະກ້າວໄປເຖິງຍຸດຕິການຖາງປ່າເຮັດໄຮ່ໂດຍພົນຖານ,ປົກປັກຮັກສາສະພາບແວດລ້ອມ ແລະ ນະໂຍບາຍທາງດ້ານສິດຜົນປະໂຫຍດຂອງປະຊາຊົນ ໃນການປູກ ແລະ ຮັກສາປ່າໄມ້ຢ່າງຄົບຊຸດ ແລະ ຮອບດ້ານ.

2). <u>ດ້ານອຸດສາຫະກຳ ແລະ ຫັດຖະກຳ</u>.

ໃນແຜນການຂະຫຍາຍຂະແໜງອຸດສາຫະກຳ ສຳລັບ 5 ປີຄັ້ງທີ II ນີ້ຕ້ອງຕັ້ງໜ້າຂະຫຍາຍອຸດສາຫະກຳປຸງແຕ່ງ ອຸດສາຫະກຳຜະລິດສິນຄ້າໃຊ້ສອຍ, ຜະລິດພາຫະນະການຜະລິດທີ່ຈຳເປັນ ຮັບໃຊ້ການກະສິກຳ-ປ່າໄມ້,ຄົມມະນາຄົມຂົນສົ່ງ ແລະບັນດາ ຂະແໜງເສດຖະກິດອື່ນໆຢ່າງແຂງແຮງ, ເພີ່ມແຫລ່ງສິນຄ້າຂາອອກໃຫ້ຫລາຍ ແລະສຸມໃສ່ ກໍ່ສ້າງກຸ່ມເສດຖະກິດ-ເຕັກນິກຂຶ້ນຢູ່ບາງເມືອງ ທີ່ເປັນຕົວແທນໃຫ້ແກ່ບັນດາເຂດເສດຖະກິດເພື່ອແນໃສ່ກໍ່ສ້າງອຸດສາຫະກຳທ້ອງຖິ່ນ ແລະເຮັດໃຫ້ໂຄງປະກອບກະສິກຳ-ປ່າໄມ້-ອຸດສາ ຫະກຳ ຢູ່ແຕ່ລະທ້ອງຖິ່ນເປັນຕົວເປັນຕົນຂຶ້ນ.

ຄາດຄະເນຮອດປີ 1990 ຍອດມູນຄ່າຜະລິດພັນອຸດສາຫະກຳ ຈະເພີ່ມຂຶ້ນ ປະມານ 90% ສົມທຽບໃສ່ປີ 1985 ສະເລ່ຍແຕ່ລະປີເພີ່ມຂຶ້ນ 14% .

ເພື່ອບັນລຸຄາດໝາຍດັ່ງກ່າວ ຕ້ອງມີວິທີການຊຸກຍູ້ໃຫ້ບັນດາໂຮງຈັກໂຮງງານທີ່ມີແລ້ວຜະລິດເຕັມຄວາມສາມາດຂອງມັນ, ດ້ານອື່ນກໍ່ຕ້ອງກໍ່ສ້າງໂຮງງານຈຳນວນໜຶ່ງຕື່ມ,ເລັ່ງໃສ່ກໍ່ສ້າງອັນຂະໜາດນ້ອຍ ແລະຂະໜາດກາງເປັນຕົ້ນຕໍ, ຕ້ອງເອົາໃຈໃສ່ເປັນພິເສດກໍ່ສ້າງໂຮງງານທີ່ນຳໃຊ້ວັດຖຸດິບພາຍໃນປະເທດແລະບັນດາໂຮງງານທີ່ຜະລິດສິນຄ້າຂາອອກ.

ປະເທດເຮົາມີເງື່ອນໄຂສະດວກໃນການຂະຫຍາຍໄຟຟ້າ ເພື່ອຕອບສະໜອງ ຄວາມຕ້ອງການໃຫ້ແກ່ການຜະລິດແລະຊີວິດການເປັນຢູ່,ໃນແຜນການ 5 ປີຄັ້ງນີ້ຈະກໍ່ສ້າງເຂື່ອນໄຟຟ້ານ້ຳຕົກຂະໜາດນ້ອຍຢູ່ທ້ອງຖິ່ນຈຳນວນໜຶ່ງ ພ້ອມກັນນັ້ນຖ້າຫາກມີເງື່ອນໄຂ ພຽງພໍ

ກໍ່ຈະສ້າງໄຟຟ້ານ້ຳຕົກຂະໜາດກາງບາງບ່ອນ .

ຄາດຄະເນຈະຜະລິດກະແສໄຟຟ້າໃນທົ່ວປະເທດ ຮອດປີ 1990 ເພີ່ມຂຶ້ນ 9 %.

ການຂຸດຄົ້ນແຮ່ຈ່ານ ກໍ່ຈະໄດ້ສືບຕໍ່ຊຸກຍູ້ຢ່າງຕັ້ງໜ້າ ເພື່ອເພີ່ມແຫລ່ງສິນຄ້າຂາອອກ. ຄາດວ່າຮອດປີ 1990 ການຜະລິດແຮ່ກົ່ວ ຈະບັນລຸໄດ້ 1.500 ໂຕນ, ຫີນກາວໄດ້180 ພັນໂຕນ.ຕັ້ງໜ້າສືບຕໍ່ວຽກງານສຳຫລວດຢັ້ງສືບຊັບພະຍາກອນທຳມະຊາດ ເພື່ອ ກະກຽມໃຫ້ການຂຸດຄົ້ນ:ກາລີ,ກົ່ວ,ຖ່ານຫີນ,ນ້ຳມັນ ແລະແຮ່ທາດອື່ນໆ.ນອກຈາກນັ້ນຮອດປີ1990 ຂະແໜງອຸດສາຫະກຳຕ້ອງຮັບປະກັນບັນລຸໄດ້ບາງຕົວເລກຄາດໝາຍສຳຄັນອື່ນໆ ໃນການຜະລິດຂອງຕົນເຊັ່ນ: ຢາສູບ 25 ລ້ານຊອງ, ແຜ່ນແພ 2,2 ລ້ານແມັດ,ເຄື່ອງມື ກະເສດ 200.000 ອັນ, ຊີມັງ 10.000 ໂຕນ, ດິນຈີ່ ດິນຂໍ 28 ລ້ານກ້ອນ, ສັງກະສີ 2,2 ລ້ານແຜ່ນ .

ບັນດາຂະແໜງການ ແລະທ້ອງຖິ່ນຕ້ອງມີມາດຕະການຊຸກຍູ້ວຽກງານຂະຫຍາຍຫັດຖະກຳຢ່າງແຂງແຮງ ລັດຈະໃຫ້ກູ້ຢືມທຶນ,ສະໜອງອຸປະກອນ,ເຄື່ອງປະກອບ,ວັດຖຸດິບ,ຊ່ວຍເຫລືອດ້ານເຕັກນິກ,ກໍ່ສ້າງພະນັກງານ,ເກັບຊື້ ແລະຈຳໜ່າຍຜະລິດຕະພັນ.ລັດຈະ ເອົາໃຈໃສ່ຊ່ວຍສ້າງບັນດາຂະແໜງການອຸດສາຫະກຳນ້ອຍ,ຫັດຖະກຳອັນໃຫມ່ຂຶ້ນ ພາຍໃຕ້ຮູບການສະຫະກອນ ແລະ ເອກະເທດ.

ກະຊວງອຸດສາຫະກຳ ແລະ ຫັດຖະກຳ ຕ້ອງປະສານສົມທົບກັບບັນດາກະຊວງ ຕ່າງໆຄົ້ນຄ້ວາໂຄງການຜະລິດສິນຄ້າໃຊ້ສອຍ ແລະສິນຄ້າຂາອອກ ແລ້ວສະເໜີສະພາລັດຖະມົນຕີພິຈາລະນາຕົກລົງ.

3)- <u>ດ້ານການກໍ່ສ້າງພື້ນຖານ</u>: ເພື່ອຮັບປະກັນປະຕິບັດແຜນການລົງທຶນກໍ່ສ້າງ ພື້ນຖານໃຫ້ສຳເລັດຕາມຄາດໝາຍ ຕ້ອງເອົາໃຈໃສ່ປັບປຸງ ແລະ ຂະຫຍາຍບໍລິສັດ ກໍ່ສ້າງຂອງລັດຢູ່ສູນກາງ ແລະທ້ອງຖິ່ນ,ປະກອບພາຫະນະ, ອຸປະກອນອັນຈຳເປັນໃຫ້ແກ່ ບໍລິສັດດັ່ງກ່າວ ເພື່ອໃຫ້ສາມາດຮັບເໝົາກໍ່ສ້າງກິດຈະການຕົ້ນຕໍ ເຊັ່ນ: ກິດຈະການກໍ່ສ້າງທໍ່ສົ່ງນ້ຳມັນຖາວອນ, ໂຮງງານຊີມັງ,ຂົວທາງ ແລະກິດຈະການເສດຖະກິດອື່ນໆ. ຕ້ອງ ກໍ່ສ້າງໂຮງງານຜະລິດວັດສະດຸກໍ່ສ້າງ ດ້ວຍວັດຖຸດິບພາຍໃນປະເທດຈຳນວນໜຶ່ງ ເຊັ່ນ: ຝຸ່ນຫີນກາວ, ດິນເຜົາ,ດິນປູພື້ນ,ນ້ຳສີ,ປູນຂາວ,ຫີນສົ້ມ ແລະອື່ນໆ ພ້ອມດຽວກັນນັ້ນ ລັດຍັງຈະຕ້ອງມີນະໂຍບາຍນຳໃຊ້ກຳລັງກໍ່ສ້າງຂອງເອກະຊົນເຂົ້າໃນວຽກງານກໍ່ສ້າງ ກິດຈະການຕ່າງໆ.

4)- ດ້ານຄົມມະນາຄົມ ຂົນສົ່ງ ແລະ ໄປສະນີ: ເພື່ອເຮັດໃຫ້ຂະແໜງຄົມມະ ນາຄົມຂົນສົ່ງເປັນປາຍແຫລມ ຖືເອົາການຂະຫຍາຍການຄົມມະນາຄົມທາງບົກເປັນອັນ ສຳຄັນກ່ອນໝູ່ ຕອບສະໜອງໄດ້ຄວາມຕ້ອງການຂອງການຂະຫຍາຍເສດຖະກິດແຫ່ງຊາດ ແລະ ວຽກງານປ້ອງກັນຊາດ ໃນແຜນການ 5 ປີຄັ້ງນີ້ຈະໄດ້ສຸມໃສ່ຟື້ນຟູເສັ້ນທາງເກົ່າ ກໍ່ສ້າງເສັ້ນທາງໃໝ່ ເຊິ່ງມີລວງຍາວທັງໝົດ 1.500 ກິໂລແມັດ ໃນນັ້ນຈະປູຢາງ 750ກິໂລແມັດ ຕົ້ນຕໍສຸມໃສ່ປູຢາງເສັ້ນທາງເລກ 8, ເລກ 9, ເລກ10 ແລະປັບປຸງທາງເລກ13 ບາງຕອນ, ຄາດຄະເນຈະກໍ່ສ້າງຂົວຂະໜາດໃຫຍ່ ແລະ ຂະໜາດກາງ 4 ແຫ່ງ.ຕາມເສັ້ນທາງທີ່ສຳຄັນ . ສືບຕໍ່ນຳໃຊ້ທ່າກຳປັ່ນຢູ່ທະເລຕາເວັນອອກ ແລະເປີດກວ້າງການຄົມມະນາຄົມຕາມລຳແມ່ນ້ຳຂອງ. ວຽກງານດັ່ງກ່າວນີ້, ຈະດຳເນີນຢູ່ບົນພື້ນຖານຮ່ວມມື ສາກົນ. ພ້ອມກັນນັ້ນກໍ່ຕ້ອງລະດົມກຳລັງປະຊາຊົນພ້ອມກັບລັດ ແລະສ້ອມແປງເສັ້ນທາງຊົນນະບົດ ຢ່າງຕັ້ງໜ້າ .

ເພື່ອຮັບປະກັນການຂະຫຍາຍບັນດາຂະແໜງເສດຖະກິດ, ວັດທະນະທຳ ຄາດຄະເນບໍລິມາດຈໍລະຈອນຂົນສົ່ງສິນຄ້າຮອດປີ 1990 ຈະເພີ່ມຂຶ້ນ 75% ສົມທຽບໃສ່ປີ 1985 , ສະເລ່ຍ ແຕ່ລະປີເພີ່ມຂຶ້ນ 11%, ການຂົນສົ່ງຄົນໂດຍສານຈະເພີ່ມຂຶ້ນ 90%,ສະເລ່ຍແຕ່ລະປີເພີ່ມຂຶ້ນ 14%. ໃນແຜນການ 5 ປີຄັ້ງນີ້ບັນຫາສຳຄັນແມ່ນຕ້ອງເອົາໃຈໃສ່ ຈັດຕັ້ງການຂົນສົ່ງ ດ້ວຍພາຫະນະປະຖົມປະຖານ ແລະດັດແປງເພື່ອແກ້ໄຂ ການລຳລຽງຂົນສົ່ງສິນຄ້າຢູ່ໃນບ່ອນທີ່ບໍ່ທັນມີເສັ້ນທາງລົດໄປຮອດ.

ຄາດຄະເນຈະປະກອບພາຫະນະຂົນສົ່ງທາງບົກທຸກຊະນິດ ປະມານ 2.000ຄັນ,ເຮືອບັນທຸກນ້ຳໜັກແຕ່ 5-100ໂຕນ 127 ລຳ, ເຮືອໂດຍສານ 13 ລຳໃຫ້ແກ່ອົງການ ຂົນສົ່ງຂອງລັດຢູ່ສູນກາງ ແລະ ທ້ອງຖິ່ນ.

ການຂົນສົ່ງທາງອາກາດກໍ່ຈະສືບຕໍ່ປັບປຸງ ແລະເພີ່ມເຕີມພາຫະນະອັນຈຳເປັນ ຢ່າງເໝາະສົມ ເພື່ອຮັບປະກັນການຂົນສົ່ງໄດ້ຢ່າງທັນການ.

ລະບົບໄປສະນີ ໂທລະຄົມມະນາຄົມ ຈະໄດ້ເອົາໃຈໃສ່ປັບປຸງ ແລະບູລະນະຢ່າງ ຕັ້ງໜ້າ ຮັບປະກັນການສື່ສານລະຫວ່າງສູນກາງ ກັບແຂວງ ແລະ ເມືອງຢ່າງທັນການ,ຕອບສະໜອງຄວາມຕ້ອງການທາງດ້ານໄປສະນີ ຂອງປະຊາຊົນ. ດັ່ງນັ້ນຄາດຄະເນວ່າ ຈະຕ້ອງປັບປຸງລະບົບໂທລະສັບອັດຕະໂນມັດຢູ່ໃນກຳແພງນະຄອນວຽງຈັນ ແລະບາງຕົວເມືອງໃຫຍ່, ຈະກໍ່ສ້າງສະຖານີໂທລະສັບ, ໂທລະເລກ ເພີ່ມເຕີມອີກຈຳນວນໜຶ່ງ, ຮັບປະກັນ

ໃຫ້ພູກງເມືອງໃນທົ່ວປະເທດ ມີຫ້ອງໄປສະນີ, ປັບປຸງລະບົບຕິດຕໍ່ສື່ສານກັບສາກົນ ໂດຍຜ່ານສະຖານີດາວທຽມພາກພື້ນດິນ " ແອງແຕກສະປຸດນິກ ".

ກະຊວງຄົມມະນາຄົມຂົນສົ່ງ ແລະ ໄປສະນີ ຕ້ອງຮີບຮ້ອນຄົ້ນຄ້ວາໂຄງການ ຂະຫຍາຍຕາໜ່າງຄົມມະນາຄົມຂົນສົ່ງ ແລະ ໄປສະນີ ໃນທົ່ວປະເທດ ສະເໜີໃຫ້ສະພາລັດຖະມົນຕີພິຈາລະນາຕົກລົງ.

5)- ດ້ານການຄ້າ ແລະ ການພົວພັນເສດຖະກິດກັບຕ່າງປະເທດ:

ຕ້ອງສືບຕໍ່ເປີດກ້ວາງຕາໜ່າງການຄ້າຂອງລັດ ແລະ ສະຫະກອນຊື້ຂາຍ, ປັບປຸງພື້ນຖານວັດຖຸ-ເຕັກນິກ ຂອງຂະແໜງການຄົງກ້າວ; ຕ້ອງເອົາໃຈໃສ່ຂະຫຍາຍຕະຫລາດຊົນນະບົດ ແນໃສ່ເພີ່ມທະວີການຈໍລະຈອນສິນຄ້າ, ຮັບໃຊ້ການຜະລິດ ແລະຊີວິດການເປັນຢູ່ໃຫ້ດີຂື້ນ, ຫັນບັນຫາລັດວິສາຫະກິດການຄ້າເຂົ້າສູ່ລະບອບໄລ່ລຽງທຸລະກິດຢ່າງຂາດຕົວແລະປະຕິບັດຫລັກການ ເຊັນອໍ່ຜູກພັນ, ເພີ່ມທະວີການກວດກາ, ຊີ້ນຳການເຄື່ອນໄຫວ, ສືບຕໍ່ເປີດກວ້າງຮູບການຫຸ້ນສ່ວນລະຫວ່າງລັດ ກັບເອກະຊົນ ແນໃສ່ນຳໃຊ້ດ້ານຕັ້ງໜ້າຂອງການຄ້າເອກະຊົນເຂົ້າຮັບໃຊ້ການຊຸກຍູ້ການຜະລິດ, ການຈໍລະຈອນສິນຄ້າ, ແກ້ໄຂຊີວິດການເປັນ ຢູ່ຂອງປະຊາຊົນ ແລະຄ່ອຍດັດສ້າງການຄ້າເອກະຊົນ ວາງມາດຕະການຄຸ້ມຄອງ ຕະຫຼາດຢ່າງເໝາະສົມ, ຕ້ານການສວຍໂອກາດກັກຕຸນສິນຄ້າ, ການແຊກຊຶມ ແລະປັ່ນປ່ວນ ຕະຫລາດຂອງພໍ່ຄ້າເອກະຊົນ.

ຄາດຄະເນປໍລິມາດການຈໍລະຈອນສິນຄ້າຂາຍຍ່ອຍຮອດປີ 1990 ຈະເພີ່ມຂຶ້ນ 45 % ສົມທຽບໃສ່ປີ 1985 ໃນນັ້ນ ປໍລິມາດຈໍລະຈອນສິນຄ້າຂາຍຍ່ອຍຂອງລັດແລະລວມໝູ່ ຈະເພີ່ມຂຶ້ນ 2,2 ເທົ່າ ແລະກວມປະມານ 61% ຂອງປໍລິມາດຈໍລະຈອນສິນຄ້າຍ່ອຍທັງໝົດ.

ຢາກປະຕິບັດໃຫ້ໄດ້ຕາມຄາດໝາຍດັ່ງກ່າວນີ້ ການຄ້າຂອງລັດຕ້ອງເພີ່ມທະວີ ການເກັບຊື້ພືນຜະລິດກະສິກຳ, ເຄື່ອງປ່າຂອງນາ, ຊຸກຍູ້ການນຳເອົາສິນຄ້າອຸດສາຫະກຳໄປສູ່ຊົນນະບົດຢ່າງແຂງແຮງ. ຮອດປີ 1990 ຄາດຄະເນຍອດມູນຄ່າເກັບຊື້ຂອງລັດ ຈະເພີ່ມຂຶ້ນ 83% ທຽບໃສ່ປີ 1985 ໃນນັ້ນການເກັບຊື້ເຂົ້າເປືອກຈະເພີ່ມຂຶ້ນ 2 ເທົ່າ, ກາເຟ ຈະເພີ່ມຂຶ້ນ 2 ເທົ່າ, ໝາກແໜ່ງຈະເພີ່ມຂຶ້ນ 56 %.

ຮອດປີ 1990 ຈຳນວນຮ້ານຄ້າຂອງລັດ ແລະ ລວມໝູ່ຈະເພີ່ມຂຶ້ນ 2,1 ເທົ່າ ໃນນັ້ນຮ້ານຄ້າລັດເພີ່ມຂຶ້ນ 2,4 ເທົ່າ, ຮ້ານຄ້າລວມໝູ່ເພີ່ມຂຶ້ນ 2 ເທົ່າ ສົມທຽບ ໃສ່ປີ 1985 .

ນອກຈາກການຂະຫຍາຍຕາໜ່າງການຄ້າຂອງລັດ ແລະ ລວມໝູ່ແລ້ວ ທ້ອງຖິ່ນຕ່າງຕ່າງ ຕ້ອງເອົາໃຈໃສ່ເປີດຕະຫລາດຊົນນະບົດ ເພື່ອສ້າງເງື່ອນໄຂສະດວກໃຫ້ແກ່ ການຊື້ຂາຍລະຫວ່າງປະຊາຊົນດ້ວຍກັນໃຫ້ຫລາຍຂື້ນ. ລັດຕ້ອງເອົາໃຈໃສ່ເປັນພິເສດທີ່ການຕອບສະໜອງສິນຄ້າ ສຳລັບປະຊາຊົນເຜົ່າຕ່າງໆ ໃນເຂດຫ່າງໄກສອກຫລີກເພື່ອປະກອບສ່ວນແກ້ໄຂດ້ານເສດຖະກິດການເມືອງ ສັງຄົມ ໃຫ້ນັບມື້ນັບດີຂື້ນ.

ໃນແຜນການ 5 ປີ ຄັ້ງນີ້ ຄາດວ່າຈະຂະຫຍາຍພື້ນຖານການບໍລິການເຊັ່ນ: ໂຮງແຮມ, ຮ້ານກິນດື່ມ ແລະອື່ນໆ ເພື່ອຮັບໃຊ້ການທ່ອງທ່ຽວ.

ການຄ້າຕ່າງປະເທດ: ຕ້ອງເພີ່ມທະວີ ການພົວພັນການຄ້າ ກັບສະຫະພາບ ໂຊວຽດ, ຫວຽດນາມ, ກຳປູເຈຍ ແລະບັນດາປະເທດສັງຄົມນິຍົມອ້າຍນ້ອງອື່ນໆ ແລະ ເປີດກ້ວາງການແລກປ່ຽນຊາຍແດນກັບບັນດາປະເທດໃກ້ຄຽງ.

ໃນແຜນການ 5 ປີຄັ້ງທີສອງ ຄາດຄະເນສິນຄ້າຂາອອກຈະເພີ່ມຂື້ນ 2 ເທົ່າສົມທຽບໃສ່ແຜນການ 5 ປີຄັ້ງທີໜຶ່ງ .ຜະລິດຕະພັນຂາອອກຕົ້ນຕໍມີ: ໄຟຟ້າ, ໄມ້ປູພື້ນ, ໄມ້ອັດ, ໄມ້ເລື່ອຍ, ກາເຟ, ໝາກແໜ່ງ, ຫີນກາວ, ແຮ່ກົ່ວ ແລະອື່ນໆ.ຕ້ອງຈຳກັດ ການສົ່ງໄມ້ທ່ອນເປັນສິນຄ້າຂາອອກ.

ຄາດຄະເນບໍລິມາດຂາເຂົ້າຈະເພີ່ມຂື້ນ 25 % ສົມທຽບໃສ່ແຜນການ 5 ປີຄັ້ງທີໜຶ່ງ, ສິນຄ້າຂາເຂົ້າຕົ້ນຕໍລວມມີ: ພາຫະນະກົນຈັກ, ເຄື່ອງອາໄຫລ່, ນ້ຳມັນເຊື້ອໄຟ ແລະສິນຄ້າໃຊ້ສອຍອື່ນໆ.

ເພື່ອເຮັດໃຫ້ວຽກງານການຄ້າກັບຕ່າງປະເທດໄດ້ດຳເນີນໄປຢ່າງສົມເຫດສົມຜົນ,ປະກອບສ່ວນເສີມຂະຫຍາຍຄວາມສາມາດບົ່ມຊ້ອນຂອງປະເທດຊາດນັ້ນ ການເຄື່ອນໄຫວ ຂາອອກ-ຂາເຂົ້າຂອງສູນກາງ ແລະ ທ້ອງຖິ່ນຕ້ອງໄດ້ຮັບການຄຸ້ມຄອງ ແລະກວດກາ ຢ່າງເຂັ້ມງວດຕາມລະບຽບການທີ່ລັດໄດ້ວາງອອກ.

6). <u>ວຽກງານການເງິນ, ທະນາຄານ</u>:

ຄາດຄະເນແຫລ່ງລາຍຮັບງົບປະມານຂອງລັດໃນປີ 1990 ຈະເພີ່ມຂື້ນ 2,2 ເທົ່າທຽບໃສ່ 1985 ຄິດສະເລ່ຍປີໜຶ່ງເພີ່ມຂື້ນ 17,7% .ສູ້ຊົນເຮັດໃຫ້ລາຍຮັບ-ລາຍ ຈ່າຍດຸ່ນດ່ຽງກັນ, ຮ່ວງລາຍຈ່າຍທີ່ຫລາຍກ່ວາໝູ່ແມ່ນລາຍຈ່າຍກໍ່ສ້າງພື້ນຖານກວມ 44,7 % ຂອງລາຍຈ່າຍລວມຍອດ.

ແຫລ່ງລາຍຮັບທີ່ສຳຄັນກ່ວາໝູ່ ແມ່ນລາຍຮັບຈາກການຜະລິດ.ດ້ວຍເຫດນັ້ນຂະແໜງ

ການເງິນຈຶ່ງຕ້ອງເປັນຫ່ວງເປັນໄຍເຖິງການລົງທຶນ ແລະປະກາດໃຊ້ບັນດານະໂຍບາຍໄມ້ງັດກະຕຸກຊຸກຍູ້ການຂະຫຍາຍການຜະລິດ, ຍົກຄຸນນະພາບຂອງຜະລິດຕະພັນໃຫ້ສູງຂຶ້ນ,ປະຢັດວັດຖຸປະກອນ.ສືບຕໍ່ດັດແປງເພີ່ມຕື່ມ ນະໂຍບາຍມອບລາຍຮັບຂອງລັດວິສາຫະກິດ ເຂົ້າງົບປະມານ ແລະນະໂຍບາຍພາສີ ທັງຮັບປະກັນໃຫ້ແກ່ການເພີ່ມລາຍຮັບດ້ານງົບປະ ມານ ແລະ ທັງກະຕຸກຊຸກຍູ້ການຜະລິດ,ທຸລະກິດ; ສົມທົບຢ່າງຖືກຕ້ອງລະຫວ່າງຜົນປະໂຫຍດຂອງລັດ ກັບຜົນປະໂຫຍດຂອງປະຊາຊົນ.ດັດສະເລ່ຍຢ່າງສົມເຫດສົມຜົນລາຍໄດ້ລະຫວ່າງ ທຸກຊັ້ນຄົນ, ສືບຕໍ່ເພີ່ມເຕີມນະໂຍບາຍລາຄາໃຫ້ເປັນອັນບໍລິບູນ,ສູ້ຊົນເຮັດໃຫ້ ລາຄາ ແລະ ຄວາມສາມາດຊື້ຂອງເງິນກີບມີຄວາມສະຫງົບເປັນປົກກະຕິ .

ເພື່ອເຮັດໃຫ້ການໃຊ້ຈ່າຍເປັນໄປຢ່າງສົມເຫດສົມຜົນ ແລະ ແທດເຫມາະກັບ ຄວາມຮຽກຮ້ອງຕ້ອງການນັ້ນ ຕ້ອງກຳນົດລະດັບການໃຊ້ຈ່າຍທຸກປະເພດ. ຈັດຕັ້ງວຽກງານ ສະມຸດບັນຊີ,ຜ່ານການເຄື່ອນໄຫວວິຊາການການເງິນ-ທະນາຄານ ເພື່ອກວດກາ ການທີ່ມອບເຂົ້າງົບປະມານ ແລະລາຍຮັບ-ລາຍຈ່າຍທຸກຮ່ວງຂອງທຸກກົມກອງການຜະລິດ , ທຸລະກິດຢ່າງເຄັ່ງຄັດ.

ໃນຮ່ວງລາຍຈ່າຍຂອງງົບປະມານນັ້ນ ແມ່ນລາຍຈ່າຍ ກໍ່ສ້າງ ພື້ນຖານ ເປັນຮ່ວງລາຍຈ່າຍທີ່ຫລາຍກວ່າຫມູ່. ແຕ່ໃນປັດຈຸບັນນີ້ ການໃຊ້ຈ່າຍດັ່ງກ່າວ ຍັງມີຄວາມ ຂາດຕົກບົກພ່ອງຫລາຍປະການ; ຕ້ອງນຳເອົາການຄຸ້ມຄອງການກໍ່ສ້າງພື້ນຖານເຂົ້າລະບຽບ ແບບແຜນໂດຍໄວ ເພື່ອປະກອບສ່ວນເຂົ້າໃນການເພີ່ມທະວີຄວາມຮັບຜິດຊອບໃນການໃຊ້ທຶນ.

7)- <u>ດ້ານແຮງງານ ແລະ ເງິນເດືອນ</u>:

ດ້ວຍຈັງຫວະເພີ່ມຂຶ້ນຂອງພົນລະເມືອງ ຄິດສະເລ່ຍແຕ່ລະປີ 2,9 %. ຮອດປີ1990 ພົນລະເມືອງປະເທດເຮົາຈະເພີ່ມຂຶ້ນເປັນ 4 ລ້ານກວ່າຄົນ.ຈຳນວນພົນໃນອາຍຸ ກະສຽນອອກແຮງງານຈະກວມອັດຕາສ່ວນ 46% .ຈຳນວນແຮງງານສັງກັດຢູ່ໃນຂະແຫນງເສດຖະກິດແຫ່ງຊາດຈະກວມ 42% ຂອງພົນລະເມືອງທັງຫມົດ ຫມາຍວ່າເພີ່ມຂຶ້ນ 16%,ຮອດ ປີ 1990 ຄັງເງິນເດືອນຈະເພີ່ມຂຶ້ນ 40% ສະເລັຍແຕ່ລະປີເພີ່ມ 8,8%, ເງິນເດືອນ ສະເລັຍຂອງພະນັກງານ ແລະ ກຳມະກອນແຕ່ລະຄົນຈະເພີ່ມຂຶ້ນ 24% ທຽບໃສ່ປີ 1986.

8)- <u>ດ້ານການສຶກສາ ແລະ ກໍ່ສ້າງພະນັກງານ</u>:

ສືບຕໍ່ຂະຫຍາຍບັນດາໂຮງຮຽນ, ທັງບຳລຸງວັດທະນະທຳ ເລັ່ງໃສ່ຖັນແຖວ ພະນັກງານ,ກຳມະກອນ. ໃນແຜນການ 5 ປີຄັ້ງທີສອງນີ້ ຕ້ອງສູ້ຊົນເຮັດແນວໃດລົບລ້າງຄວາມ

ຜູ້ຮູ້ໜັງສື ໃນບ່ອນທີ່ມີປະກົດການກັບຄືນສູ່ຄວາມບໍ່ຮູ້ໜັງສືຢ່າງຊຸ່ນເຊີງ, ສືບຕໍ່ຈັດຕັ້ງການບຳລຸງວັດທະນະທຳໃຫ້ລັດຖະກອນ ແລະ ປະຊາຊົນໃຫ້ມີລະດັບທົ່ວໄປຊັ້ນ ບ1 ແລະ ບ2, ຮັບປະກັນໃຫ້ພະນັກງານຫລັກແຫລ່ງ ສະມາຊິກພັກ ແລະ ຊາວໜຸ່ມຢູ່ຂັ້ນຮາກຖານໄດ້ຮຽນຈົບຊັ້ນປະຖົມໂດຍທົ່ວໄປ.

ເອົາໃຈໃສ່ປັບປຸງ ແລະຂະຫຍາຍລະບົບເຮືອນຝາກເດັກ, ໂຮງຮຽນອະນຸບານ ແລະສາມັນສຶກສາ. ຄາດຄະເນຮອດປີ 1990 ຈຳນວນນັກຮຽນສາມັນຈະເພີ່ມຂຶ້ນ 17% ທຽບໃສ່ປີ 1985.

ປັບປຸງ ແລະ ຂະຫຍາຍລະບົບໂຮງຮຽນວິຊາຊີບ, ອາຊີວະຊັ້ນກາງ ແລະຊັ້ນ ມະຫາວິທະຍາໄລ ທາງດ້ານກະສິກຳ,ປ່າໄມ້,ຄົມລະປະທານ,ການຄ້າ,ແຜນການ, ການເງິນ, ສາທາລະນະສຸກ, ສ້າງຄູ ແລະ ອື່ນໆ .

ເພື່ອຕອບສະໜອງຄວາມຕ້ອງການໃນການຂະຫຍາຍເສດຖະກິດແຫ່ງຊາດແລະ ຊີວິດສັງຄົມຈຳນວນນັກຮຽນຊັ້ນສູງ,ຊັ້ນກາງ ແລະຊັ້ນຕົ້ນ ຈະເພີ່ມຂຶ້ນ 1,5ເທົ່າທຽບໃສ່ ແຜນການ 5 ປີຄັ້ງທີ I .

ໃນແຜນການ 5 ປີນີ້ຈະສືບຕໍ່ສົ່ງນັກຮຽນໄປຮ່ຳຮຽນຢູ່ບັນດາປະເທດສັງຄົມນິຍົມ ອ້າຍນ້ອງ ປະມານ 5500 ຄົນ ແລະຈະມີນັກຮຽນທີ່ຮຽນຈົບວິຊາສະເພາະຕ່າງໆກັບຄືນ ປະເທດປະມານ 5.000 ຄົນ.ໂດຍເລັ່ງໃສ່ຈຸດໝາຍດັ່ງກ່າວເທິງນັ້ນ ຈະໄດ້ກໍ່ສ້າງ ໂຮງຮຽນມະຫາວິທະຍາໄລ, ໂຮງຮຽນຊັ້ນກາງ ແລະ ໂຮງຮຽນຊັ້ນຕົ້ນ ຈຳນວນໜຶ່ງ ,ເພີ່ມຖັນແຖວຄູສອນແຕ່ລະຊັ້ນ, ແຕ່ລະຂະແໜງວິທະຍາສາດ ພ້ອມກັນນັ້ນກໍ່ຕ້ອງດັດແປງ ຫລັກສູດ ແລະເນື້ອໃນການສຶກສາໃຫ້ຖືກຕ້ອງຕາມແນວທາງຂອງພັກ ສົມທົບຢ່າງແໜ້ນແຟ້ນລະຫວ່າງການຮຽນກັບພາກປະຕິບັດຕົວຈິງ.ຄຽງຄູ່ກັນນັ້ນກໍຈະໄດ້ເອົາໃຈໃສ່ກໍ່ສ້າງລະບົບໂຮງຮຽນຂອງອົງການຈັດຕັ້ງມະຫາຊົນເຊັ່ນ:ກຳມະບານ,ຊາວໜຸ່ມ, ແມ່ຍິງຂັ້ນຕົ້ນ.

9). <u>ດ້ານສາທາລະນະສຸກ:</u>

ເອົາໃຈໃສ່ປັບປຸງ ແລະຂະຫຍາຍຕາໜ່າງສາທາລະນະສຸກລົງຮອດຮາກຖານ. ໃນແຜນການ 5 ປີຄັ້ງນີ້ຈຳນວນໂຮງໝໍ ນ້ອຍ ສຸກສາລາຢູ່ຮາກຖານຈະເພີ່ມຂຶ້ນ 2 ເທົ່າ .

ຮອດປີ 1990 ຈຳນວນພະນັກງານແພດຈະເພີ່ມຂຶ້ນ 55%. ໃນຈຳນວນພົນລະເມືອງ 10.000 ຄົນໃດຈະມີແພດຊັ້ນສູງ 3 ຄົນ, ຊັ້ນກາງ ແລະຊັ້ນຕົ້ນ 31 ຄົນ,ຕຽງຄົນເຈັບ 31 ໜ່ວຍ, ຈະຕ້ອງເພີ່ມທະວີການປັບປຸງຢາພື້ນເມືອງ ແລະ ຊຸກຍູ້ການສົມທົບຢາຫລວງ

ກັບຢາພື້ນເມືອງ ໃນການປິ່ນປົວພະຍາດ ໃຫ້ກ້ວາງຂວາງກວ່າເກົ່າ, ຈະຕ້ອງເອົາ ໃຈໃສ່ວຽກງານໂຄສະນາ ສຶກສາອົບຮົມປະຊາຊົນໃຫ້ປະຕິບັດການອະນາໄມ 3 ສະອາດ, ຕ້ານພະຍາດທີ່ຕິດແປດຕ່າງໆ.

10). ດ້ານວັດທະນະທຳ-ສັງຄົມ:

ຕ້ອງຊຸກຍູ້ການເຄື່ອນໄຫວວັດທະນະທຳ, ສິນລະປະກຳ, ສ້າງຫໍວາງສະແດງ, ຫໍພິພິດທະພັນ ແລະ ຫໍສະໝຸດຕື່ມຈຳນວນໜຶ່ງ; ເພີ່ມປຶ້ມອ່ານໃຫ້ບັນດາຫໍສະໝຸດຕ່າງໆ, ຈັດຕັ້ງສະໂມສອນປາຖະກະຖາ ແລກປ່ຽນຄຳເຫັນທາງດ້ານວັດທະນະທຳ, ວິທະຍາສາດ, ປະຫວັດສາດ, ເສດຖະກິດ , ຂ່າວຕ່າງໆ ...

ເອົາໃຈໃສ່ຂະຫຍາຍໜ່ວຍສິນລະປະວັນນະຄະດີ, ສ້າງກອງສິລະປະກອນອາຊີບແລະເຄິ່ງອາຊີບ, ກໍ່ສ້າງໂຮງສະແດງກາຍຍະສິນ, ໂຮງລະຄອນ ຫຸ່ນກະຕາ , ໂຮງມະໂຫລະສົບ ຂຶ້ນຕື່ມ.

ຈັດຕັ້ງໜ່ວຍສາຍຮູບເງົາເຄື່ອນທີ່ ເພີ່ມຂຶ້ນຕື່ມອີກ 20 ໜ່ວຍ, ຍົກປະລິມານການພິມຈຳໜ່າຍປຶ້ມຂຶ້ນ 2,6 ເທົ່າ, ຍົກປະລິມານການພິມວາລະສານ ແລະໃບຂ່າວຕ່າງໆເພີ່ມຂຶ້ນຕື່ມອີກ.

ຍົກຄຸນນະພາບວຽກງານວິທະຍຸກະຈາຍສຽງ ແລະໂທລະພາບ ຂ່າວສານຂຶ້ນຕື່ມ ໂດຍໃຫ້ສອດຄ່ອງກັບແນວທາງນະໂຍບາຍຂອງພັກ, ເປີດກ້ວາງຕາໜ່າງໂທລະໂຄ່ງ, ເອົາໃຈໃສ່ພິເສດຕໍ່ເຂດຊົນເຜົ່າສ່ວນໜ້ອຍຫ່າງໄກ, ເພີ່ມຊົ່ວໂມງອອກອາກາດທາງໂທ ລະພາບຂຶ້ນ 2 ເທົ່າ.

ຈະຕ້ອງເອົາໃຈໃສ່ປົກປັກຮັກສາ, ສ້ອມແປງ, ຄຸ້ມຄອງສະຖານທີ່ ແລະວັດຖຸບູຮານປະຫວັດສາດໃຫ້ດີ, ປັບປຸງແລະກໍ່ສ້າງພື້ນຖານວັດຖຸໃຫ້ແກ່ການຂະຫຍາຍການທ່ອງທ່ຽວ, ສ້າງຫໍວາງສະແດງ ຜົນສຳເລັດຂອງການກໍ່ສ້າງປະເທດຊາດ; ປະຕິບັດນະໂຍບາຍຂອງພັກແລະລັດໃຫ້ຄົບຖ້ວນ ໃນການເບິ່ງແຍງດູແລຜູ້ເຖົ້າແກ່ ຜູ້ອອກກິນເບ້ຍບຳນານ, ຜູ້ທີ່ເສຍອົງຄະ, ຄອບຄົວຂອງຜູ້ເສຍສະລະຊີວິດເພື່ອການປະຕິວັດ, ຄອບຄົວຜູ້ທີ່ມີຄຸນງາມຄວາມດີຕໍ່ປະເທດຊາດ.

## ພາກທີ ສາມ

ບາງມາດຕາການດຳເນີນ ເພື່ອຈັດຕັ້ງປະຕິບັດແຜນການ.

ແຜນການພັດທະນາເສດຖະກິດ-ສັງຄົມ ທີ່ໄດ້ຍົກຂຶ້ນມານັ້ນ ແມ່ນບໍລິມາດ ວຽກງານໜຶ່ງທັງໃຫຍ່ຫລວງ ແລະທັງສັບສົນ. ເພື່ອປະຕິບັດແຜນການດັ່ງກ່າວນີ້ຢ່າງມີໄຊຊະນະ ນັ້ນຕ້ອງມີຄວາມຕັດສິນໃຈສູງ, ພ້ອມກັນນັ້ນກໍ່ຕ້ອງມີມາດຕາການຈັດຕັ້ງປະຕິບັດຢ່າງ ວິທະຍາສາດ ແລະແໜ້ນແຟ້ນ.

1)- ຄະນະກຳມະການແຜນການແຫ່ງລັດ ພ້ອມກັບບັນດາກະຊວງ, ຄະນະກຳມະການແຫ່ງລັດ, ທ້ອງຖິ່ນຕ່າງໆ ກວດຄືນແຜນການຂອງແຕ່ລະທ້ອງຖິ່ນ, ແຕ່ລະຫົວໜ່ວຍ ວິສາຫະກິດ ຢ່າງລະອຽດ; ຕ້ອງແນະນຳໃຫ້ທ້ອງຖິ່ນ, ຫົວໜ່ວຍວິສາຫະກິດຕ່າງໆກໍ່ສ້າງ ແຜນການໃຫ້ແທດຕົວຈິງ ເພື່ອຂຸດຄົ້ນໝົດຄວາມສາມາດຂອງເຂົາເຈົ້າ, ແນໃສ່ຮັບປະກັນ ການປະຕິບັດແຜນການຂອງລັດ; ເງື່ອນໄຂເພື່ອຈະຮັບປະກັນໃຫ້ແກ່ຜົນສຳເລັດແມ່ນຕ້ອງມີ ມາດຕາການລະອຽດ ແທດກັບຕົວຈິງ. ຄະນະກຳມະການແຜນການແຫ່ງລັດ ແລະບັນດາກະຊວງຕ່າງໆ ຕ້ອງເອົາໃຈໃສ່ຕິດຕາມກວດກາການປະຕິບັດແຜນການ ແລະຕ້ອງມີມາດຕາ ການຕົວຈິງ ຊ່ວຍເຫລືອທ້ອງຖິ່ນ ແລະຫົວໜ່ວຍຕ່າງໆ ແກ້ໄຂຂໍ້ຫຍຸ້ງຍາກຕ່າງໆ ເພື່ອສຳເລັດການປະຕິບັດແຜນການເປັນຢ່າງດີ. ອາດເວົ້າໄດ້ວ່າ, ໃນປັດຈຸບັນນີ້ການຕິດຕາມ, ຊຸກຍູ້, ຊ່ວຍເຫລືອການປະຕິບັດແຜນການ ຢູ່ແຕ່ລະຂັ້ນຍັງອ່ອນ, ຕ້ອງໄດ້ປັບປຸງບູລະນະ ຄືນໃໝ່. ການສ້າງແຜນການທີ່ສ່ອງແສງແນວທາງຂອງພັກຢ່າງຄົບຖ້ວນນັ້ນ ມັນເປັນພຽງແຕ່ ຜົນສຳເລັດໃນເບື້ອງຕົ້ນເທົ່ານັ້ນ ຂອດຕັດສິນໄຊຊະນະສຸດທ້າຍຍັງແມ່ນການຈັດຕັ້ງປະຕິບັດຕົວຈິງ.

2). ຕ້ອງເລັ່ງລັດການນຳໃຊ້ກົນໄກຄຸ້ມຄອງເສດຖະກິດໃໝ່ຢ່າງກວ້າງຂວາງ, ຮັບປະກັນສິດເປັນເຈົ້າ ຂອງທ້ອງຖິ່ນ ແລະ ຮາກຖານຕ່າງໆ, ປະຕິບັດລະບອບ ໄລ່ລຽງເສດຖະກິດ ແລະ ທຸລະກິດສັງຄົມນິຍົມ. ເນື້ອແທ້ຂອງກົນໄກຄຸ້ມຄອງເສດຖະກິດໃໝ່ແມ່ນການເສີມຂະຫຍາຍລັກສະນະເປັນເຈົ້າການ, ປະດິດສ້າງຂອງທ້ອງຖິ່ນ ແລະ ຮາກຖານ, ຂຸດຄົ້ນທຸກແຫລ່ງຄວາມສາມາດ ເພື່ອສຳເລັດໜ້າທີ່ທີ່ໄດ້ ມອບໝາຍ ເປັນຢ່າງດີ . ໃນເງື່ອນໄຂທີ່ພວກເຮົາຍັງມີຄວາມຫຍຸ້ງຍາກທາງດ້ານການຕິດຕໍ່ສື່ສານລະຫວ່າງສູນກາງ ກັບທ້ອງຖິ່ນຄືໃນປັດຈຸບັນນີ້ ການຮັບປະກັນສິດເປັນເຈົ້າຂອງບັນດາທ້ອງຖິ່ນ ແລະ ຮາກ ຖານໃນການປະຕິບັດກົນໄກຄຸ້ມຄອງເສດຖະກິດໃໝ່ ກໍ່ຍິ່ງມີຄວາມໝາຍສຳຄັນ. ວຽກງານດັ່ງກ່າວນີ້ ຍັງເປັນວຽກງານອັນໜຶ່ງທີ່ໃໝ່ອ່ອນ, ຍັງມີຫລາຍນະໂຍບາຍທີ່ບໍ່ທັນສົມບູນ, ການປະຕິບັດກົນໄກໃໝ່ນີ້ ແນ່ນອນວ່າອາດຈະບໍ່ຫລີກເວັ້ນໄດ້ ຄວາມຂາດຕົກບົກພ່ອງທີ່ຈະເກີດຂຶ້ນ ແຕ່ພວກເຮົາຕ້ອງ**ມີຄວາມ**ເຊື່ອໝັ້ນ ແລະ ຕັດສິນໃຈປະຕິບັດ, ຜ່ານພຶດຕິກຳຕົວຈິງກໍ່

ຈະຊ່ວຍໃຫ້ພວກເຮົາປັບປຸງບັນດານະໂຍບາຍ ແລະກົນໄກດັ່ງກ່າວນັ້ນໃຫ້ເປັນອັນບໍລິບູນໄດ້.

3)-ເພື່ອປະຕິບັດແບບວິທີການຄຸ້ມຄອງໄລ່ລຽງທຸລະກິດສັງຄົມນິຍົມຢ່າງແທ້ຈິງນັ້ນຕ້ອງ ເລັ່ງລັດກໍ່ສ້າງບັນດາກຳນົດໝາຍເສດຖະກິດ-ເຕັກນິກເປັນບ່ອນອີງໃຫ້ແກ່ການກໍ່ສ້າງແຜນ ການ ແລະ ຄິດໄລ່ການເຄື່ອນໄຫວຜະລິດທຸລະກິດ , ຖ້າຫາກບໍ່ວາງກຳນົດໝາຍ ກໍ່ຈະ ເຮັດໃຫ້ການໄລ່ລຽງເສດຖະກິດບໍ່ມີພື້ນຖານຕົວຈິງ. ດັ່ງນັ້ນ ບັນດາເງື່ອນໄຂຂອງ ແຜນ ການຜະລິດທຸລະກິດ ຕ້ອງມີບ່ອນອີງອັນໜັກແໜ້ນ ຈຶ່ງຈະປະຕິບັດໄດ້ດີ; ຕ້ອງປະຕິບັດລະ ບອບຜູກພັນເສດຖະກິດ ເຊັ່ນ: ອໍ່ຜູກພັນສະໜອງວັດຖຸ, ອໍ່ຜູກພັນຈຳໜ່າຍຜະລິດພັນ . ເພື່ອຮັບປະກັນເງື່ອນໄຂອັນຈຳເປັນດັ່ງກ່າວນັ້ນ ອົງການແຜນການ ແລະ ບັນດາອົງການທີ່ ກ່ຽວຂ້ອງ ຕ້ອງເອົາໃຈໃສ່ຊ່ວຍເຫລືອບັນດາຮາກຖານການຜະລິດ,ທຸລະກິດໃນການເຊັນອໍ່ ຜູກພັນ.

ການປະຕິບັດລະບອບໄລ່ລຽງເສດຖະກິດນີ້ ຕ້ອງໝູນໃຊ້ນະໂຍບາຍລາຄາທີ່ສົມ ເຫດ ສົມຜົນ,ເຮັດໃຫ້ລາຄາມີຄວາມໝັ້ນທ່ຽງ,ຮັບປະກັນໃຫ້ວິສາຫະກິດ ດຳເນີນການຜະລິດ ມີ ພົນກຳໄລ, ລັດຕ້ອງເອົາໃຈໃສ່ຄຸ້ມຄອງລາຄາຢ່າງແທດເຖິງ .

4)- ໃນການປະຕິບັດກົນໄກຄຸ້ມຄອງໃໝ່ນີ້ ພວກເຮົາກໍ່ບໍ່ເບົາເບົາມາດຕາການ ບໍລິ ຫານແລະການສຶກສາອົບຮົມແຕ່ກໍ່ຕ້ອງໝູນໃຊ້ມາດຕາການເສດຖະກິດຢ່າງກວ້າງຂວາງ . ດ້ານໜຶ່ງກໍ່ຕ້ອງລະມັດລະວັງແລະສະກັດກັ້ນທ່າອ່ຽງທີ່ຢາກໜັກໄປແຕ່ດ້ານ ມາດຕາການ ເສດຖະກິດ ໂດຍບໍ່ເອົາໃຈໃສ່ຕໍ່ວິທີການບໍລິຫານ ແລະສຶກສາອົບຮົມ.

ຕ້ອງປະຕິບັດລະບອບໃຫ້ເງິນເດືອນ ຕາມຜະລິດຕະພັນຢ່າງກວ້າງຂວາງ. ຄົ້ນຄ້ວາ ແລະນຳໃຊ້ຄ່າບຳເນັດໃຫ້ມີປະສິດທິຜົນ ແຕ່ກໍ່ບໍ່ໝາຍຄວາມວ່າ ຈະປະຕິບັດສຳເລັດ ແຜນ ການຂອງລັດແລ້ວ ຈຶ່ງຈ່າຍຄ່າບຳເນັດໃຫ້,ອາດຈະໃຊ້ຮູບການໃຫ້ຄ່າບຳເນັດ ຕາມ ອົງກ ງານ ແຕ່ລະຂອດເຊັ່ນ : ໃຫ້ຄ່າບຳເນັດໃນການ ປະຫຍັດວັດຖຸດິບ ວັດຖຸປະກອບ ຮັບປະ ກັນຄຸນນະພາບຂອງຜະລິດຕະພັນໃນການອະນາໄມສ່ວນລວມ,ການຕິດຈິງ,ວັດແທກກວດນັບ ຈັດເຈນ,ທ່າທີດີງລູກຄ້າ...ທັງນີ້ກໍ່ເພື່ອກະຕຸກຊຸກຍູ້ນ້ຳໃຈຫ້າວຫັນຕໍ່ວຽກງານ.

5)-ການປະຕິບັດແຜນການພັດທະນາເສດຖະກິດ-ສັງຄົມຖ້າຈະອີງໃສ່ແຕ່ກຳລັງ ຂອງ ລັດເທົ່ານັ້ນ ກໍ່ບໍ່ສາມາດທີ່ຈະສຳເລັດໄດ້ ດ້ວຍເຫດນັ້ນຈຶ່ງຕ້ອງຮູ້ນຳໃຊ້ບັນດາ ພາກສ່ວນ ເສດຖະກິດ ແລະຕ້ອງຮູ້ລະດົມປະຊາຊົນເຂົ້າຮ່ວມໃນການປະຕິບັດແຜນການຂອງລັດ.ການ ຫັນເປັນແຜນການສຳລັບພາກສ່ວນເສດຖະກິດລວມໝູ່ ແລະເອກະເທດນັ້ນ ຕ້ອງ ດຳເນີນ

ຜ່ານບັນດານະໂຍບາຍເສດຖະກິດ ແລະຂໍ້ຜູກພັນເສດຖະກິດ ບໍ່ແມ່ນວ່າຈະມອບເປັນ ຕົວເລກກົດຄຳສັ່ງໃຫ້ພາກສ່ວນເສດຖະກິດດັ່ງກ່າວປະຕິບັດ. ແຜນການຕ້ອງຕິດພັນກັບຕະຫລາດ, ຕິດພັນກັບການໄລ່ລຽງເສດຖະກິດສັງຄົມນິຍົມ, ເປີດກ້ວາງການເຊັນຂໍ້ຜູກພັນ ເພື່ອເກັບ ຊື້ ຜະລິດພັນກະສິກຳ ແລະ ການຂາຍສິນຄ້າອຸດສາຫະກຳລະຫວ່າງການຄ້າຂອງລັດ, ສະຫະກອນ, ຄອບຄົວສະມາຊິກສະຫະກອນ, ຄອບຄົວພະນັກງານ ພາລະກອນ ກັບເສດຖະກິດ ເອກະເທດ ເພື່ອເພີ່ມເຕີມແຫລ່ງສິນຄ້າ ແລະແກ້ໄຂທີ່ພວກເຮົາຍັງຖືກຈຳກັດ; ຕ້ອງ ນຳໃຊ້ ພາກສ່ວນເສດຖະກິດທີ່ບໍ່ແມ່ນສັງຄົມນິຍົມ ຕາມທິດນຳທີ່ວ່າ: ນຳໃຊ້, ຈຳກັດ, ດັດສ້າງໃຫ້ ໄປຕາມແຜນນະໂຍບາຍຂອງພັກ, ຮັບປະກັນບໍ່ໃຫ້ສົ່ງຜົນສະທ້ອນອັນບໍ່ດີຄືນໃສ່ ການຜະລິດ ແລະ ຊີວິດການເປັນຢູ່ຂອງປະຊາຊົນ.

6)- ການປະກອບສ່ວນຢ່າງຕັ້ງໜ້າຂອງມະຫາຊົນ ເປັນປັດໄຈທີ່ຂາດບໍ່ໄດ້ ຂອງໄຊຊະນະທຸກຢ່າງ. ນັບຕັ້ງແຕ່ການວາງແຜນການໄປເຖິງມາດຕາການປະຕິບັດແຜນການ ຕະຫລອດຮອດພົນຂອງການປະຕິບັດແຜນການ ກໍ່ລ້ວນແຕ່ຕ້ອງມີການເຂົ້າຮ່ວມປຶກສາຫາລື ປະກອບຄວາມເຫັນຂອງມະຫາຊົນ. ຈັດຕັ້ງການແຂ່ງຂັນສັງຄົມນິຍົມ ກໍ່ແມ່ນວິທີການໜຶ່ງທີ່ສຳຄັນ ເພື່ອສຳເລັດແຜນການຂອງລັດ ແຕ່ການແຂ່ງຂັນນັ້ນ ຈະນຳຜົນປະໂຫຍດອັນ ແທ້ຈິງ ແລະ ດູດດຶງມະຫາຊົນສ່ວນຫລວງຫລາຍເຂົ້າຮ່ວມໃນຂະບວນການດັ່ງກ່າວນັ້ນໄດ້ ກໍ່ຕໍ່ເມື່ອຂະບວນການແຂ່ງຂັນນັ້ນ ຫາກວາງເນື້ອໃນ ແລະຈຸດໝາຍລະອຽດທີ່ສອດຄ່ອງກັບ ຄວາມຕ້ອງການຂອງການຜະລິດ, ທຸລະກິດ ແລະຂອງການແກ້ໄຂຊີວິດການເປັນຢູ່ຂອງມະຫາຊົນໃຫ້ໄດ້ເປັນຢ່າງດີເທົ່ານັ້ນ.

*

*   *

ແຜນການພັດທະນາເສດຖະກິດ-ສັງຄົມ ໃນຊຸມປີ 1986-1990 ໄດ້ໄຂເສັ້ນທາງໃຫ້ປະເທດຊາດຂອງພວກເຮົາໄປສູ່ອະນາຄົດອັນແຈ່ມໃສ, ເປັນແສງສະຫວ່າງເຍືອງທາງ ໃຫ້ບັນດາຂະແໜງການເສດຖະກິດ ແລະວັດທະນະທຳກ້າວຂຶ້ນ, ຊີ້ທິດທາງໃຫ້ແກ່ການປົວແປງຊີວິດການເປັນຢູ່ທາງດ້ານວັດຖຸ ແລະ ຈິດໃຈຂອງປະຊາຊົນເຮົາ ພວກເຮົາຮັບຮູ້ຢ່າງເລິກເຊິ່ງວ່າ ການປະຕິບັດແຜນການ 5 ປີຄັ້ງນີ້ນັ້ນບໍ່ແມ່ນວຽກງານທີ່ງ່າຍດາຍ ກົງກັນຂ້າມມັນພັດແມ່ນວຽກງານທີ່ຫຍຸ້ງຍາກສັບສົນ ແຕ່ພວກເຮົາກໍ່ມີບ່ອນອີງອັນໜັກແໜ້ນ, ມີແນວທາງອັນຖືກຕ້ອງຂອງພັກເຮົາ. ມີບົດຮຽນຕົວຈິງ ໃນການປົກປັກຮັກສາແລະກໍ່ສ້າງລະບອບໃໝ່

ໃນ 10 ປີທີ່ຜ່ານມາ ມີຖັນແຖວພະນັກງານທີ່ໄດ້ເຕີບໃຫຍ່ຂະຫຍາຍຕົວ,ມີນ້ຳໃຈ ຮັກຊາດ ຮັກສັງຄົມນິຍົມຂອງປະຊາຊົນເຮົາ ແລະມີຄວາມສາມັກຄີ ຊ່ວຍເຫລືອສາກົນພວກເຮົາເຊື່ອໝັ້ນຢ່າງໜັກແໜ້ນວ່າ ແຜນການຂະຫຍາຍເສດຖະກິດ-ສັງຄົມດັ່ງນີ້ ຈະໄດ້ຮັບການປະຕິບັດຢ່າງມີໄຊ.

*

*   *



# ລາຍງານ

## ຂອງຄະນະບໍລິຫານງານສູນກາງພັກ
## ກ່ຽວກັບການດັດແປງ
## ເພີ່ມເຕີມກົດລະບຽບຂອງພັກ
## ຕໍ່ກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກ

ສະເໜີໂດຍ ສະຫາຍ ສີສົມພອນ ລໍວັນໄຊ

ກຳມະການ ກົມການເມືອງສູນກາງພັກ

**ຮຽນ: ຄະນະປະທານ !**

**ສະຫາຍ ທີ່ຮັກແພງທັງຫລາຍ !**

ເພື່ອຕອບສະໜອງຄວາມຮຽກຮ້ອງຕ້ອງການຂອງວຽກງານກໍ່ສ້າງພັກໃນໄລຍະໃໝ່, ກົດລະບຽບຂອງພັກ ຕ້ອງສ່ອງແສງຢ່າງຄົບຖ້ວນເຖິງລັກສະນະ, ຫລັກການ ແລະ ທິດນຳ ໃນການກໍ່ສ້າງພັກແບບໃໝ່ຂອງຊົນຊັ້ນກຳມະກອນຢູ່ໃນປະເທດເຮົາ. ກອງປະຊຸມໃຫຍ່ຄັ້ງທີ III ຂອງພັກກໍ່ໄດ້ມີການດັດແປງ ແລະ ເພີ່ມເຕີມໃນກົດລະບຽບຂອງພັກບາງຈຸດແລ້ວ.

ຜ່ານການປະຕິບັດກົດລະບຽບ ແລະ ບັນດາມະຕິຕ່າງໆຂອງພັກນັ້ນ, ພັກເຮົາໄດ້ຮັບການປັບປຸງ ແລະ ເຕີບໃຫຍ່ຂະຫຍາຍຕົວ. ນັ້ນແມ່ນຜົນງານອັນໃຫຍ່ຫລວງທີ່ພວກເຮົາຍາດມາໄດ້ໃນໄລຍະຜ່ານມາ, ທັງແມ່ນສາຍເຫດອັນຕົ້ນຕໍ ເພື່ອນຳເອົາການປະຕິວັດ ປະເທດເຮົາກ້າວສູ່ໄຊຊະນະໃໝ່ໃຫຍ່ຫລວງກວ່າເກົ່າດັ່ງໄດ້ຍົກຂຶ້ນໃນບົດລາຍງານການເມືອງຂອງຄະນະບໍລິຫານງານສູນກາງພັກ ທີ່ສະເໜີໂດຍ ສະຫາຍ ເລຂາທິການໃຫຍ່ ໄກສອນ ພົມວິຫານ ຕໍ່ກອງປະຊຸມໃຫຍ່ຄັ້ງນີ້. ພຶດຕິກຳໄດ້ພິສູດໃຫ້ພວກເຮົາເຫັນໄດ້ວ່າ ພັກເຮົາ ໄດ້ກຳ

ແຫນັນຫລັກມູນຂອງລັດທິ ມາກ-ເລນິນ ກ່ຽວກັບການກໍ່ສ້າງພັກ ແລະຫມູນໃຊ້ມັນຢ່າງມີຫົວຄິດປະດິດສ້າງເຂົ້າໃສ່ເງື່ອນໄຂຕົວຈິງຂອງປະເທດເຮົາ ໃນນັ້ນຊົນຊັ້ນຊາວໄຮ່ນາ ກວມສ່ວນຫລວງຫລາຍ, ຊົນຊັ້ນກຳມະກອນພັດຍັງມີຫນ້ອຍທີ່ສຸດ. ມັນກໍ່ຢັ້ງຢືນວ່າ ພວກເຮົາໄດ້ກໍ່ສ້າງພັກປະຊາຊົນປະຕິວັດລາວ ເປັນພັກມາກ-ເລນິນ ທີ່ແທ້ຈິງ,ມີຄວາມສາມາດ ພຽງພໍເພື່ອນຳພາປະເທດຊາດກ້າວຂຶ້ນສັງຄົມນິຍົມໂດຍກົງ ໂດຍບໍ່ຜ່ານທຶນນິຍົມ. ພ້ອມກັນນັ້ນ ກໍ່ໄດ້ຍົກໃຫ້ເຫັນຈຸດອ່ອນ ແລະຂໍ້ຄົງຄ້າງທົ່ວໄປຂອງພັກເຮົາ: ລັກສະນະຊົນຊັ້ນກຳມະກອນ, ລັກສະນະນຳຫນ້າຕໍ່ສູ້ ແລະ ຄວາມສາມາດນຳພາຂອງພັກໄປບໍ່ທັນກັບ ຫນ້າທີ່ ການເມືອງຂອງພັກ. ດ້ານຫນຶ່ງອີກ ພວກເຮົາຍັງບໍ່ທັນເຮັດໃຫ້ຄະນະພັກທຸກຂັ້ນ, ພະນັກງານ,ສະມາຊິກພັກທຸກຄົນ ກຳແຫນັນກົດລະບຽບຂອງພັກ, ຊ້ຳບໍ່ຫນຳການຈັດຕັ້ງພັກຈຳນວນຫນຶ່ງ ຮັບເອົາມະຫາຊົນເຂົ້າພັກກໍ່ບໍ່ຖືກຕາມຫລັກການ, ລະບຽບການຂອງພັກ; ການຮຽກໂຮມກອງປະຊຸມໃຫຍ່ກໍ່ບໍ່ຖືກຕາມເວລາທີ່ໄດ້ກຳນົດໄວ້ໃນກົດລະບຽບ, ການປະຕິບັດຫລັກການ ລວມສູນປະຊາທິປະໄຕ ພາຍໃນພັກ, ການພົວພັນລະຫວ່າງການຈັດຕັ້ງພັກ ກັບອົງການປົກຄອງ ແລະ ບັນດາອົງການຈັດຕັ້ງມະຫາຊົນ ຍັງບໍ່ທັນດີ; ການຕິຊົມຕົນເອງ ແລະຕິຊົມກັນ ບໍ່ທັນແຂງແຮງ ແລະ ເປັນປົກກະຕິ.

ຜ່ານການປະຕິບັດກົດລະບຽບຂອງພັກໃນໄລຍະຜ່ານມາ ພວກເຮົາເຫັນວ່າ: ກົດ ລະບຽບຂອງພັກແມ່ນຖືກຕ້ອງແລ້ວ, ແຕ່ໃນໄລຍະໃຫມ່ນີ້ ຍັງມີບາງບັນຫາທີ່ຈະຕ້ອງໄດ້ກຳນົດລະອຽດຕື່ມອີກເຊັ່ນ: ການຈັດຕັ້ງພັກຢູ່ຮາກຖານ, ສຳນັກງານອົງການອ້ອມຂ້າງສູນກາງ, ແຂວງກຳແພງນະຄອນ, ຢູ່ຕ່າງປະເທດ ແລະ ການຈັດຕັ້ງການນຳພາຂອງພັກໃນກອງທັບ ແລະ ອື່ນໆ.

ອີງໃສ່ສະພາບການຕົວຈິງດັ່ງກ່າວເທິງນັ້ນ, ອີງໃສ່ບົດລາຍງານການເມືອງຂອງ ຄະນະບໍລິຫານງານສູນກາງພັກຕໍ່ກອງປະຊຸມໃຫຍ່ຄັ້ງນີ້ ເພື່ອຕອບສະຫນອງ ຄວາມ ຮຽກຮ້ອງຕ້ອງການຂອງການປະຕິວັດ, ພັກເຮົາຕ້ອງສືບຕໍ່ຍົກສູງລັກສະນະຊົນຊັ້ນກຳມະກອນ,ລັກສະນະນຳຫນ້າຕໍ່ສູ້, ຍົກສູງຄຸນນະພາບຂອງພະນັກງານ, ສະມາຊິກພັກ, ປະຕິບັດຫລັກ ການລວມສູນປະຊາທິປະໄຕຢ່າງເຂັ້ມງວດ, ເພີ່ມທະວີຄວາມສາມັກຄີພາຍໃນພັກໃຫ້ຫນັກແຫນ້ນຕື່ມອີກ. ຄະນະບໍລິຫານງານສູນກາງພັກ ຂໍສະເຫນີຕໍ່ກອງປະຊຸມໃຫຍ່ ຜູ້ແທນ ທົ່ວປະເທດຂອງພັກ ດັດແປງ ແລະເພີ່ມເຕີມບາງບັນຫາເຂົ້າໃນກົດລະບຽບຂອງພັກດັ່ງຕໍ່ໄປນີ້:

ກ່ຽວກັບແນວທາງ, ຫນ້າທີ່ຂອງການປະຕິວັດປະເທດເຮົາ ໃນໄລຍະຂ້າມຜ່ານ ກ້າວ

ຂົນສັງຄົມນິຍົມ.

ຂໍ້ສະເໜີຂຽນເຂົ້າໃນກົດລະບຽບຂອງພັກດັ່ງນີ້:

"... ປົບປຸງ ແລະ ເພີ່ມທະວີພະເດັດການກຳມາຊີບຢ່າງບໍ່ຢຸດຢັ້ງ, ຈັດຕັ້ງແລະຮັບປະກັນໃຫ້ປະຊາຊົນຜູ້ອອກແຮງງານເຜົ່າຕ່າງໆ ສາມັກຄີແໜ້ນແຟ້ນ ແລະເສີມ ຂະຫຍາຍສິດເປັນເຈົ້າປະເທດຊາດ, ເປັນເຈົ້າສັງຄົມ, ເປັນເຈົ້າຕົນເອງ, ດຳເນີນການປະຕິວັດທັງ 3 ປະການໄປພ້ອມກັນຄື :ການປະຕິວັດທາງດ້ານກຳລັງການຜະລິດ, ການປະຕິ ວັດທາງດ້ານການພົວພັນການຜະລິດ, ການປະຕິວັດແນວຄິດ ແລະ ວັດທະນະທຳ,ໃນນັ້ນການປະຕິວັດທາງດ້ານກຳລັງການຜະລິດ ມີຄວາມໝາຍຕັດສິນ ແລະ ໃນການປະຕິວັດແນວຄິດວັດທະນະທຳນັ້ນ ການສຶກສາເປັນໃຈກາງ ແລະ ໄປກ່ອນກ້າວໜຶ່ງ..."

## ໝວດ ທີ ໜຶ່ງ

ກ່ຽວກັບ ສະມາຊິກພັກ

ມາດຕາ 6: ສະເໜີໃຫ້ຂຽນເຂົ້າຕື່ມ: "ສະມາຊິກພັກສົມບູນຜູ້ທີ່ມີມາດຖານຄົບຖ້ວນຈະໄດ້ຮັບບັດພັກ ເພື່ອໃຊ້ໃນການຮ່ວມຊີວິດໃນພັກ ".

## ໝວດ ທີສອງ

ຫຼັກການ ຈັດຕັ້ງ ແລະ ສາຍໃຍການຈັດຕັ້ງຂອງພັກ

ມາດຕາ 8: ສະເໜີໃຫ້ຂຽນເຂົ້າຕື່ມ "... ບັນດາກະຊວງ, ອົງການທຽບເທົ່າອ້ອມຂ້າງສູນກາງ ໃຫ້ຈັດຕັ້ງຄະນະຮັບຜິດຊອບກະຊວງ ແລະ ອົງການທຽບເທົ່າ, ຄະນະດັ່ງກ່າວ ແມ່ນພາຍໃຕ້ການນຳພາໂດຍກົງຂອງຄະນະເລຂາທິການສູນກາງພັກ ແລະຖືເປັນຄະນະພັກຂັ້ນໜຶ່ງ ແລະ ເປັນຂັ້ນເທິງຂອງບັນດາໜ່ວຍພັກຮາກຖານ ໃນທົ່ວກະຊວງ ຫລືທົ່ວອົງການທຽບເທົ່າ ".

– ບັນດາໜ່ວຍພັກຮາກຖານຢູ່ອ້ອມຂ້າງແຂວງ, ກຳແພງນະຄອນ ແມ່ນພາຍໃຕ້ການນຳພາໂດຍກົງຂອງຄະນະປະຈຳພັກແຂວງ, ກຳແພງນະຄອນ .

– ບັນດາໜ່ວຍພັກໃນອົງຄະນະພັກເມືອງ ແມ່ນພາຍໃຕ້ການນຳພາຂອງຄະນະປະຈຳພັກເມືອງ.ແຕ່ບໍ່ໄປບໍ່ສ້າງຕັ້ງຄະນະພັກຮາກຖານອີກ ໃຫ້ມີແຕ່ໜ່ວຍພັກຮາກຖານເທົ່ານັ້ນ.

ໃຫ້ສ້າງຕັ້ງຄະນະຮັບຜິດຊອບວຽກງານພັກ ແລະພະນັກງານປະຈຳແຕ່ລະສະຖານ ທູດ

ລາວ ເພື່ອຮັດວຽກງານພັກ, ວຽກງານພະນັກງານຢູ່ຕ່າງປະເທດ. ຄະນະດັ່ງກ່າວ ພາຍໃຕ້ການນຳພາໂດຍກົງຂອງຄະນະເລຂາທິການສູນກາງພັກ.

<u>ມາດຕາ 9</u>: ສະເໜີໃຫ້ຂຽນເພີ່ມດັ່ງນີ້: ວ່າດ້ວຍການນຳພາຂອງພັກຕໍ່ກອງທັບປະຊາຊົນ ແລະ ກຳລັງປ້ອງກັນຄວາມສະຫງົບປະຊາຊົນ.

ພັກນຳພາກອງທັບປະຊາຊົນ ແລະ ກຳລັງປ້ອງກັນຄວາມສະຫງົບປະຊາຊົນໂດຍກົງ, ລວມສູນເປັນເອກະພາບ ແລະ ຮອບດ້ານ.

ເພື່ອຊ່ວຍຄະນະບໍລິຫານງານສູນກາງພັກ ແລະ ຂັ້ນແຂວງຄົ້ນຄ້ວາວາງແຜນ ນະໂຍບາຍ ແລະຊີ້ນຳວຽກງານທຸກດ້ານໃນກອງທັບ ແລະ ໃນກຳລັງປ້ອງກັນຄວາມສະຫງົບ ປະຊາຊົນ, ຢູ່ສູນກາງໃຫ້ຈັດຕັ້ງຄະນະກຳມະການປ້ອງກັນຊາດ-ປ້ອງກັນຄວາມສະຫງົບ ຂອງສູນກາງພັກ, ຢູ່ຂັ້ນແຂວງ ແລະ ກຳແພງນະຄອນ ໃຫ້ຈັດຕັ້ງຄະນະກຳມະການ ປ້ອງກັນຊາດ-ປ້ອງກັນຄວາມສະຫງົບຂອງຄະນະພັກແຂວງ ແລະ ຄະນະພັກກຳແພງນະຄອນ .

ກ່ຽວກັບການຈັດຕັ້ງພັກຮາກຖານໃນກອງທັບ ແລະ ໃນກຳລັງປ້ອງກັນຄວາມສະ ຫງົບນັ້ນ ໃຫ້ອີງໃສ່ສະພາບການຕົວຈິງ ຈັດຕັ້ງເປັນໜ່ວຍພັກຂອງກອງຮ້ອຍ ຫລືຂອງກອງພັນ.

ໃນກອງທັບ, ທາງດ້ານການບັນຊາ ແມ່ນປະຕິບັດລະບອບຜູ້ດຽວບັນຊາ, ພ້ອມກັນນັ້ນເພື່ອຮັບປະກັນຫລັກການລວມສູນປະຊາທິປະໄຕ, ນຳພາເປັນໝູ່ຄະນະຢ່າງໜັກແໜ້ນ , ໃຫ້ຈັດຕັ້ງສະພາການທະຫານຂັ້ນຢູ່ກະຊວງປ້ອງກັນປະເທດ, ຢູ່ຂັ້ນກອງພົນໃຫຍ່, ກອງພົນນ້ອຍ, ກອງພັນໃຫຍ່ ແລະ ທຽບເທົ່າ. ສະພາການທະຫານຂັ້ນໃດ ແມ່ນອົງການນຳ ພາເປັນໝູ່ຄະນະຂອງຂັ້ນນັ້ນ .

ກົມໃຫຍ່ການເມືອງກອງທັບ ແລະ ອົງການ ການເມືອງຂັ້ນຕ່າງໆ ເປັນຜູ້ຮັບຜິດຊອບວຽກງານພັກ, ວຽກງານການເມືອງ ແລະ ວຽກງານພະນັກງານໃນກອງທັບ. ກົມໃຫຍ່ການເມືອງກອງທັບ ມີຖານະຄືກັນກັບຄະນະໜຶ່ງຂອງສູນກາງພັກ ແລະຢູ່ພາຍໃຕ້ການຊີ້ນຳຂອງຄະນະເລຂາທິການສູນກາງພັກ.

ໃນກຳລັງປ້ອງກັນຄວາມສະຫງົບ, ສະພາປ້ອງກັນຄວາມສະຫງົບຂອງກະຊວງພາຍໃນແມ່ນອົງການນຳພາເປັນໝູ່ຄະນະ ຂອງກຳລັງປ້ອງກັນຄວາມສະຫງົບທັງໝົດ.

ສາຍໃຍການຈັດຕັ້ງ, ພາລະບົດບາດ, ໜ້າທີ່, ສິດຂອງຄະນະກຳມະການ ປ້ອງກັນຊາດ-ປ້ອງກັນຄວາມສະຫງົບ, ຂອງສະພາການທະຫານ, ອົງການ ການເມືອງ ໃນກອງທັບ, ຂອງສະພາປ້ອງກັນຄວາມສະຫງົບ ແລະ ສາຍພົວພັນລະຫວ່າງບັນດາອົງການເຫລົ່າ

ນີ້ ແມ່ນຄະນະບໍລິຫານງານສູນກາງພັກ ເປັນຜູ້ກຳນົດ.

## ໝວດ ທີ່ເກົ້າ

### ລະບຽບ ວິໄນ ຂອງພັກ

<u>ມາດຕາ 33</u> : ສະເໜີເພີ່ມເຕີມດັ່ງນີ້ : "... ສະມາຊິກພັກຜູ້ໃດທີ່ກະທຳຜິດ ຕໍ່ກົດໝາຍຂອງລັດ ແມ່ນອົງການລັດຈະລົງໂທດຕາມກົດໝາຍ, ຫ້າມບໍ່ໃຫ້ການຈັດຕັ້ງຂອງພັກປົກປິດການກະທຳເຫລົ່ານັ້ນ, ແລະການຈັດຕັ້ງພັກ ຍັງຈະຕ້ອງພິຈາລະນາປະຕິບັດວິໄນຂອງພັກຕໍ່ສະມາຊິກພັກຜູ້ນັ້ນນຳອີກ ".

## ໝວດທີ່ ສິບ

### ການເງິນຂອງພັກ

<u>ມາດຕາ 35</u> : ສະເໜີຂຽນແຈ້ງດັ່ງນີ້ :

- ສຳລັບສະມາຊິກພັກທີ່ໄດ້ຮັບເງິນເດືອນ, ເງິນບຳນານ ແລະ ເງິນ ອຸດໜູນ ຕ້ອງອອກເງິນບຳລຸງພັກເດືອນລະ 0,5% ຂອງຈຳນວນເງິນສົດຂອງເງິນເດືອນພື້ນຖານ, ເງິນບຳນານ ແລະ ເງິນອຸດໜູນ .
- ສຳລັບສະມາຊິກພັກ ທີ່ບໍ່ມີເງິນເດືອນ ຕ້ອງອອກເງິນບຳລຸງພັກເດືອນລະ 1 ກີບ.
- ສຳລັບສະມາຊິກພັກທີ່ເຂົ້າໃນອົງການຈັດຕັ້ງມະຫາຊົນ, ນອກຈາກເສຍເງິນບຳລຸງໃຫ້ພັກແລ້ວ ຕ້ອງເສຍເງິນບຳລຸງໃຫ້ອົງການຂອງຕົນທີ່ໄດ້ເຂົ້າຮ່ວມຕາມກົດລະບຽບ ຂອງອົງການນັ້ນ.
- ເງິນບຳລຸງພັກແຕ່ລະເດືອນ ຕ້ອງມອບໃຫ້ຄະນະພັກຂັ້ນເທິງ 2/3 ແລະຫັກໄວ້ ຢູ່ໃນລົງພັກຂອງຕົນ 1/3 ເພື່ອໃຊ້ຈ່າຍເຂົ້າໃນວຽກງານຂອງພັກ.

ກົດລະບຽບຂອງພັກ ແມ່ນເອກະສານໜຶ່ງ ສຳຄັນທີ່ສຸດ ເພື່ອກໍ່ສ້າງພັກ, ອັນນັ້ນແມ່ນເຮັດໃຫ້ຫລັກການ ເລນິນນິດ ກ່ຽວກັບການກໍ່ສ້າງພັກເປັນອັນລະອຽດ, ຮັບປະກັນເຮັດໃຫ້ພັກເຮົາສົມເປັນຜູ້ຈັດຕັ້ງ ແລະ ນຳພາທຸກໄຊຊະນະຂອງການປະຕິວັດລາວຢູ່ສະເໝີ.

ບັນດາການຈັດຕັ້ງຂອງພັກທຸກຂັ້ນ ບັນດາສະມາຊິກພັກ ຕ້ອງຮ່ຳຮຽນຄົ້ນຄວ້າກຳແໜ້ນກົດລະບຽບ ເພື່ອປະຕິບັດໃຫ້ຖືກຕ້ອງ .

ວັນທີ 13 ເດືອນ 11 ປີ 1986

*

* *

# ຊົມເຊີຍ ຜົນສຳເລັດ ອັນສະຫງ່າງາມ
# ກອງປະຊຸມໃຫຍ່ຄັ້ງທີ VI ຂອງພັກກອມມູນິດ
# ຫວຽດນາມ

ກອງປະຊຸມໃຫຍ່ຄັ້ງທີ VI ຂອງພັກກອມມູນິດ ຫວຽດນາມ ເຊິ່ງແມ່ນເຫດການທີ່ ມີຄວາມຫມາຍສຳຄັນໃນຊີວິດການເມືອງຂອງພັກ ແລະ ປະຊາຊົນຫວຽດນາມອ້າຍນ້ອງ ໄດ້ໄຂຂຶ້ນຢູ່ນະຄອນຫລວງ ຮ່າໂນ້ຍ ແຕ່ວັນທີ 15 ເຖິງວັນທີ 18 ເດືອນ ທັນວາ ປີ 1986 ແລະ ສຳເລັດລົງຢ່າງສະຫງ່າງາມ.

ເຂົ້າຮ່ວມກອງປະຊຸມໃຫຍ່ຄັ້ງນີ້ ມີຜູ້ແທນຈຳນວນ 1129 ສະຫາຍ ເຊິ່ງເປັນຕົວແທນທີ່ດີເດັ່ນໃຫ້ແກ່ສະມາຊິກພັກຈຳນວນກ່ວາ 1 ລ້ານ 7 ແສນສະຫາຍ ຈາກອົງການຈັດ ຕັ້ງພັກຢູ່ທ້ອງຖິ່ນ ແລະ ຂະແຫນງການໃນທົ່ວປະເທດ. ໂດຍຕອບສະຫນອງຄຳເຊີນ ຂອງຄະນະບໍລິຫານງານສູນກາງພັກກອມມູນິດ ຫວຽດນາມ, ຄະນະຜູ້ແທນສາກົນຈຳນວນ 35 ຄະນະກໍໄດ້ເຂົ້າຮ່ວມກອງປະຊຸມໃຫຍ່ດັ່ງກ່າວ ເຊິ່ງໃນນັ້ນມີຄະນະຜູ້ແທນພັກເຮົາ ໂດຍ ແມ່ນສະຫາຍ ເລຂາທິການໃຫຍ່ ໄກສອນ ພົມວິຫານ ເປັນຫົວຫນ້າ, ຄະນະຜູ້ແທນພັກ ກອມມູນິດ ໂຊວຽດ ໂດຍແມ່ນສະຫາຍ ອ.ກ.ລີກາຈົບ ກຳມະການກົມການເມືອງສູນກາງ ພັກ ເປັນຫົວຫນ້າ ແລະ ຄະນະຜູ້ແທນພັກປະຊາຊົນປະຕິວັດກຳປູເຈຍ ໂດຍແມ່ນສະຫາຍເລຂາທິການໃຫຍ່ ເຮັງສຳຣິນ ເປັນຫົວຫນ້າ.

ພາຍຫລັງທີ່ໄດ້ເຮັດວຽກດ້ວຍຄວາມຟົດຟື້ນ ແລະ ເຄັ່ງຮ້ອນ ອັນໄດ້ສະແດງ ໃຫ້ເຫັນເຖິງຈິດໃຈປ່ຽນແປງຢ່າງຈະແຈ້ງ, ດ້ວຍຄວາມສາມັກຄີເປັນເອກະພາບຢ່າງສົມບູນຢູ່ພາຍໃນພັກ ແລະປ່ຽມລົ້ນໄປດ້ວຍຄວາມສາມັກຄີສາກົນ ກອງປະຊຸມໃຫຍ່ ໄດ້ສຳເລັດພົນຢ່າງສະຫງ່າງາມ ດ້ວຍຄວາມເປັນເອກະພາບໂດຍສົມບູນ ຕໍ່ບັນດາທັດສະນະ,ແຜນນະໂຍບາຍທີ່ໄດ້ຖືກກຳນົດຢູ່ໃນລາຍງານການເມືອງຂອງຄະນະບໍລິຫານງານສູນກາງ ແລະເອກະສານອື່ນໆຂອງສູນກາງ ທີ່ສະເຫນີຕໍ່ກອງປະຊຸມໃຫຍ່, ເປັນເອກະສັນກັນຮັບຮອງເອົາບັນດາມະ

ຕີທີ່ມີຄວາມໝາຍສຳຄັນ ກ່ຽວກັບແຜນນະໂຍບາຍໃຫຍ່ອັນແນໃສ່ຫັນປ່ຽນສະພາບການ, ນຳເອົາປະເທດຊາດຜ່ານພົ້ນຈາກຄວາມຫຍຸ້ງຍາກ ແລະ ການທົດສອບແລ້ວກ້າວຂຶ້ນດ້ວຍບາດກ້າວທີ່ໜັກແໜ້ນ.

ກອງປະຊຸມໃຫຍ່ໄດ້ຄັດເລືອກ ເອົາຄະນະບໍລິຫານງານສູນກາງພັກສະໄໝທີ III ອັນສະແດງເຖິງລັກສະນະຕໍ່ເນື່ອງ ແລະລັກສະນະສືບທອດ ເພື່ອປະຕິບັດການຕັດສິນໃຈ ປ່ຽນແປງການນຳພາຂອງພັກໃຫ້ສອດຄ່ອງ ກັບຕົວຈິງ ແຫ່ງການປະຕິວັດ ຫວຽດນາມ ໃນປັດຈຸບັນ. ສະຫາຍ ເຈືອງຈິງ ອະດີດເລຂາທິການໃຫຍ່ຄະນະບໍລິຫານງານສູນກາງພັກກອມມູນິດຫວຽດນາມ ໄດ້ສະເໜີບໍ່ສະໝັກຮັບເລືອກຕັ້ງເປັນຄະນະບໍລິຫານງານສູນກາງພັກ ສະໄໝນີ້ອີກ ເນື່ອງຈາກວ່າອາຍຸກະສຽນເຖົ້າແກ່ ແລະ ສຸຂະພາບ ອ່ອນເພຍ . ສະຫາຍ ຫງວຽນວັນລິນ ໄດ້ຖືກເລືອກຕັ້ງເປັນເລຂາທິການໃຫຍ່ຄະນະບໍລິຫານງານສູນກາງພັກກອມມູນິດ ຫວຽດນາມ.

ຜົນສຳເລັດອັນສະຫງ່າງາມຂອງກອງປະຊຸມໃຫຍ່ຄັ້ງທີ III ຂອງພັກກອມມູນິດຫວຽດນາມ ໄດ້ສະແດງໃຫ້ເຫັນບາດກ້າວເຕີບໃຫຍ່ເຂັ້ມແຂງຂອງພັກ ແລະ ການຂະຫຍາຍ ຕົວອັນໃຫຍ່ຫລວງຂອງການປະຕິວັດ ຫວຽດນາມ ພ້ອມທັງຊີ້ໃຫ້ເຫັນບາດກ້າວຫັນປ່ຽນທີ່ສຳຄັນໃນຂະບວນວິວັດການສືບທອດ ແລະ ປ່ຽນແປງການນຳພາຂອງພັກ ດ້ານການເມືອງ, ແນວຄິດ ແລະການຈັດຕັ້ງ, ແມ່ນກຳລັງແຮງໃໝ່ ແລະເປັນພື້ນຖານທີ່ສຳຄັນ ເພື່ອເພີ່ມ ທະວີຄວາມສາມັກຄີເປັນເອກະພາບໃນທົ່ວພັກ ທົ່ວປວງຊົນພາພາລະກິດປະຕິວັດຫວຽດນາມກ້າວຂຶ້ນຍາດເອົາໄຊຊະນະໃໝ່ໃຫຍ່ຫລວງກ່ວາເກົ່າ .

*

* *

ດ້ວຍຈິດໃຈປະຕິວັດ ເຫັນແຈ້ງຕໍ່ຄວາມຈິງ, ຕີລາຄາຖືກຄວາມຈິງແລະເວົ້າຖືກຄວາມຈິງ ກອງປະຊຸມໃຫຍ່ຄັ້ງທີ III ຂອງພັກກອມມູນິດ ຫວຽດນາມ ໄດ້ຢືນຢັນບັນດາໝາກຜົນຂອງໄຊຊະນະທີ່ກອງທັບ ແລະ ປະຊາຊົນ ຫວຽດນາມໄດ້ອອກແຮງສູ້ຊົນຍາດມາໄດ້ໃນຊຸມປີຜ່ານມາ, ຕັ້ງໜ້າກວດກາຄືນດ້ານຍັງອ່ອນ, ຈຳແນກຄວາມຜິດພາດ, ຂໍ້ບົກພ່ອງແລະສາຍເຫດຂອງມັນຢ່າງເລິກເຊິ່ງ ຈະແຈ້ງ ຍົກໃຫ້ເຫັນວິທີແກ້ໄຂ, ກຳນົດໜ້າທີ່ແລະເປົ້າໝາຍສູ້ຊົນໃນຊຸມປີທີ່ຍັງເຫລືອໃນໄລຍະທຳອິດຂອງສະໄໝຂ້າມຜ່ານ.

ໃນ 5 ປີຜ່ານມາ ແມ່ນໄລຍະທາງທີ່ເຕັມໄປດ້ວຍການທົດສອບ ຂອງການ ປະຕິວັດ ຫວຽດນາມ ແລະ ປະຊາຊົນ ຫວຽດນາມ. ການປະຕິວັດ ຫວຽດນາມ ເຖິງວ່າໄດ້ ດຳເນີນໄປໃນເງື່ອນໄຂສະພາບແວດລ້ອມສາກົນ ແລະພາຍໃນປະເທດພວມມີຄວາມ ສະດວກເປັນພື້ນຖານແຕ່ກໍມີຄວາມຫຍຸ້ງຍາກສັບສົນບໍ່ໜ້ອຍ, ເຖິງວ່າໄດ້ຮັບການຊ່ວຍເຫລືອ ອັນໃຫຍ່ຫລວງ ແລະ ການຮ່ວມມືຫລາຍດ້ານ ກັບສະຫະພາບໂຊວຽດ, ກັບປະເທດສັງຄົມ ນິຍົມອ້າຍນ້ອງອື່ນໆ, ໄດ້ຮັບການສະໜັບສະໜູນເປັນໃຈຈາກບັນດາປະເທດເພື່ອນມິດແລະປະຊາຊົນທີ່ຮັກຫອມອິດສະລະພາບໃນໂລກ ແຕ່ຫວຽດນາມ ກໍຄືລາວ ແລະ ກຳປູເຈຍ ໄດ້ປະເຊີນໜ້າຢ່າງລຽນຕິດ ກັບການຮຸກຮານ, ການມ້າງເພ ແລະປິດລ້ອມທາງດ້ານ ເສດຖະກິດຂອງພວກສັດຕູ.

ໂດຍປະຕິບັດຕາມມະຕິຂອງກອງປະຊຸມໃຫຍ່ຄັ້ງທີ V, ເສີມ ຂະຫຍາຍມູນເຊື້ອຕໍ່ສູ້ ບໍ່ຍອມຈຳນົນ , ເຊີດຊູລັດທິວິລະຊົນປະຕິວັດ ກອງທັບ ແລະປະຊາຊົນຫວຽດນາມໄດ້ ບັນລຸບັນດາໝາກຜົນທີ່ສຳຄັນ ໃນພາລະກິດກໍ່ສ້າງສັງຄົມນິຍົມ ແລະ ຍາດເອົາໄຊຊະນະ ໃຫຍ່ຫລວງໃນການຕໍ່ສູ້ປົກປັກຮັກສາປະເທດຊາດ, ປ້ອງກັນຄວາມສະຫງົບທາງດ້ານການເມືອງ ແລະ ເຮັດພັນທະສາກົນ.

ນັບແຕ່ປີ 1985 ມາຮອດປັດຈຸບັນ ການຜະລິດທາງດ້ານກະສິກຳແລະອຸດສາຫະກຳໄດ້ມີຄວາມກ້າວໜ້າຢ່າງເດັ່ນຈັດ. ໃນ 5 ປີ (1981–1985) ປະລິມານການຜະລິດກະສິກຳ ສະເລ່ຍແຕ່ລະປີເພີ່ມຂຶ້ນ 4,9% ທຽບໃສ່ໄລຍະຊຸມປີ 1976–1980 ເຊິ່ງເພີ່ມ ຂຶ້ນ 1,9 %ຕໍ່ປີ. ປະລິມານການຜະລິດສະບຽງໄດ້ມີບາດກ້າວຂະຫຍາຍຕົວທີ່ສຳຄັນຄື ເພີ່ມຂຶ້ນຈາກ 14,4 ລ້ານໂຕນໃນປີ 1980 ເປັນ 18,2 ລ້ານໂຕນໃນປີ 1985. ຜະລິດ ພົນທາງທະເລກໍໄດ້ກ້າວໜ້າດີຂຶ້ນ, ມູນຄ່າພົນຜະລິດທາງທະເລທີ່ສົ່ງອອກຕ່າງປະເທດ ໃນປີ 1985 ແມ່ນໄດ້ເພີ່ມຂຶ້ນກ່ວາ 8 ເທື່ອ ທຽບໃສ່ປີ 1980.

ໃນໄລຍະ 5 ປີ (1981–1985) ປະລິມານການຜະລິດທາງດ້ານອຸດສາຫະກຳ ສະເລ່ຍປີໜຶ່ງເພີ່ມຂຶ້ນ 9,5% ທຽບໃສ່ໄລຍະຊຸມປີ 1976–1980 ສະເລ່ຍ ປີໜຶ່ງ ມີແຕ່ 0,6%, ໃນປີ 1985 ເມື່ອທຽບໃສ່ປີ 1980 ຜະລິດໄຟຟ້າໄດ້ເພີ່ມຂຶ້ນ 1,6ຕື້ກິ ໂລ ວັດໂມງ, ຜະລິດຝຸ່ນ (ປຸຍ) ໄດ້ເພີ່ມຂຶ້ນ 145 ພັນໂຕນ, ຊີມັງເພີ່ມຂຶ້ນ 800 ພັນໂຕນ, ແຜ່ນແພເພີ່ມຂຶ້ນ 195 ລ້ານແມັດ, ນ້ຳຕານຊາຍເພີ່ມຂຶ້ນ 275 ພັນໂຕນ, ເຈ້ຍເພີ່ມຂຶ້ນ 31 ພັນໂຕນ. ມູນຄ່າສິນຄ້າຂາອອກ 5 ປີ (1981 – 1985) ເຖິງວ່າບໍ່ທັນບັນລຸແຜນ

ການກໍຕາມ ແຕ່ເມື່ອທຽບໃສ່ 5 ປີລັງກ່ອນ ແມ່ນເພີ່ມຂຶ້ນເຖິງ 75%.

ໃນ 5 ປີ (1981-1985) ຍອດຜະລິດພັນສັງຄົມ ສະເລ່ຍໃສ່ຫົວຄົນ ໄດ້ ເພີ່ມຂຶ້ນ 7,5 %, ລາຍຮັບແຫ່ງຊາດເພີ່ມຂຶ້ນ 6,4 % (ໃນ 5 ປີລັງກ່ອນ (1976-1980) ຍອດຜະລິດພັນສັງຄົມສະເລ່ຍປີໜຶ່ງເພີ່ມ 1,4%, ລາຍຮັບແຫ່ງຊາດເພີ່ມ 0,4% ).

ໃນ 11 ປີກ່ວາ ນັບແຕ່ມື້ພາກໃຕ້ຫວຽດນາມໄດ້ຮັບການປົດປ່ອຍໂດຍສົມບູນ ເປັນຕົ້ນມາ ໄດ້ມີ 300 ກິດຈະການໃຫຍ່ ແລະ ຈຳນວນພັນໆກິດຈະການຂະໜາດກາງ , ຂະໜາດນ້ອຍ ໄດ້ຮັບການກໍ່ສ້າງຂຶ້ນ. ລັດທິສັງຄົມນິຍົມໄດ້ມີຮາກຖານວັດຖຸ ເຕັກນິກໃໝ່ຕື່ມ ໃນນັ້ນມີຮາກຖານການຜະລິດທີ່ສຳຄັນຈຳນວນໜຶ່ງ ເຊັ່ນ: ໄຟຟ້າ, ນ້ຳມັນ, ຊີມັງ,ກົນຈັກ, ຕ່ຳແຜ່ນ, ນ້ຳຕານ, ໂຫລະຄົມມະນາຄົມ ໆລໆ...

ໃນ 5 ປີຜ່ານມາການດັດສ້າງສັງຄົມນິຍົມກໍ່ໄດ້ຮັບຜົນສຳເລັດດີສົມຄວນ, ຜົນສຳເລັດໃຫຍ່ກ່ວາໝູ່ ແມ່ນໄດ້ນຳເອົາຊາວໄຮ່ນາສ່ວນຫລວງຫລາຍຢູ່ພາກໃຕ້ຈຳນວນ 86,4 % ຂອງຄອບຄົວ ແລະ ເນື້ອທີ່ 81,8 % ເຂົ້າສູ່ການທຳມາຫາກິນແບບລວມໝູ່; ນຳເອົາພີ່ນ້ອງຊາວເຜົ່າຢູ່ເຂດໃຕ້ງວຽນ ເຂົ້າສູ່ການທຳມາຫາກິນແບບລວມໝູ່ແລະກໍ່ສ້າງຊີວິດໃໝ່. ບັນດາຊົນຊັ້ນສັກດີນາເຈົ້າທີ່ດິນ, ນາຍທຶນຈຳໜ່າຍ, ນາຍທຶນໃຫຍ່ ເຈົ້າຂອງໂຮງຈັກ , ໂຮງງານ, ການຄ້າໄດ້ຖືກລົບລ້າງ.

ພັກ ແລະ ລັດຫວຽດນາມ ໄດ້ມີຄວາມເປັນຫ່ວງເປັນໄຍທີ່ສຸດ ຕໍ່ຊີວິດການເປັນຢູ່ຂອງປະຊາຊົນ, ໃນ 5 ປີຜ່ານມາເຖິງວ່າພົນລະເມືອງໄດ້ເພີ່ມຂຶ້ນເຖິງ 6 ລ້ານຄົນແຕ່ລະດັບການຜະລິດ ຜະລິດພັນຕົ້ນຕໍຈຳນວນໜຶ່ງ ສະເລ່ຍໃສ່ຫົວຄົນໄດ້ເພີ່ມຂຶ້ນເຊັ່ນ: ທັນຍາຫານເພີ່ມຂຶ້ນຈາກ 268 ກິໂລ ໃນປີ 1980 ເປັນ 304 ກິໂລ ໃນປີ 1985; ຊີ້ນໝູ ເພີ່ມຈາກ 8,3 ກິໂລເປັນ 12,5 ກິໂລ; ປາຈາກ 10,3 ກິໂລເປັນ 13,5 ກິໂລ; ນ້ຳຕານຈາກ 3,2 ກິໂລເປັນ 7,2 ກິໂລ ແລະຍ້ອນແນວນັ້ນ ຈຶ່ງຫລຸດຜ່ອນໄດ້ການຊື້ທັນຍາຫານມາຈາກຕ່າງປະເທດ ແລະ ສິນຄ້າໃຊ້ສອຍທີ່ຈຳເປັນຈຳນວນໜຶ່ງ. ໃນ 5 ປີ ຜ່ານມາແຮງງານຈຳນວນ 4 ລ້ານຄົນໄດ້ຖືກບັນຈຸເຮັດວຽກຕາມຂະແໜງການເສດຖະກິດແຫ່ງຊາດ. ລັດໄດ້ກໍ່ສ້າງເຮືອນຢູ່ຕື່ມຈຳນວນ 2,1 ລ້ານແມັດມົນທົນ ໃນນັ້ນມີ 1,1ລ້ານແມັດມົນທົນ ແມ່ນຢູ່ຕາມເຂດຊຸມໂຮງງານ ແລະ ຕົວເມືອງໃຫຍ່; ວຽກງານສຶກສາ,ສາທາລະນະສຸກກໍ່ໄດ້ຂະຫຍາຍຕົວ. ຈຳນວນນັກຮຽນສາມັນໄດ້ເພີ່ມຈາກ 11,5ລ້ານຄົນໃນປີ1980 ເປັນ 12,4 ລ້ານຄົນໃນປີ 1985. ໃນ5ປີຜ່ານມາຕາໜ່າງສາທາລະນະສຸກໄດ້ຂະຫຍາຍ

ຕົວແລະຈຳນວນຕຽງນອນສຳລັບຄົນເຈັບນີ້ທັງຫມົດ 12.400 ຫນ່ວຍ.

ໃນ 5 ປີຜ່ານມານີ້ ປະຊາຊົນ ຫວຽດນາມ ໄດ້ຍາດເອົາໄຊຊະນະທີ່ໃຫຍ່ຫລວງ ຕື່ມອີກ ໃນການຕໍ່ສູ້ເພື່ອປົກປັກຮັກສາປະເທດຊາດ, ປ້ອງກັນຄວາມສະຫງົບ ທາງການເມືອງ ແລະ ເຮັດພັນທະສາກົນ. ປະຊາຊົນ ແລະ ກຳລັງປະກອບອາວຸດ ຫວຽດນາມໄດ້ຕໍ່ສູ້ຢ່າງດຸເດືອດທີ່ສຸດ ຢູ່ຕາມຊາຍແດນພາກເຫນືອ ສະກັດກັ້ນການຮຸກຮານບຽດບັງຂອງສັດຕູ, ປົກປັກຮັກສາປະເທດຊາດ ແລະ ເຮັດໃຫ້ກົນອຸບາຍລາຍລ່ຽມກໍ່ສົງຄາມທຳລາຍຂອງສັດຕູ ປະລາໄຊໄປບາດກ້າວຫນຶ່ງ.

ການປະສານສົມທົບລະຫວ່າງເສດຖະກິດ ກັບການປ້ອງກັນຊາດນັ້ນ ກອງທັບໄດ້ ປະກອບສ່ວນສ້າງເສດຖະກິດໂດຍໄດ້ຮັບຫມາກຜົນທີ່ດີງາມໃນເບື້ອງຕົ້ນ. ໃນການປະ ຕິ ບັດຫນ້າທີ່ປົກປັກຮັກສາປະເທດຊາດນັ້ນ ປະຊາຊົນຫວຽດນາມ ໄດ້ປະສານຍຸດທະສາດ ສູ້ຮົບແລະ ເຮັດສຳເລັດພັນທະສາກົນກັບປະຊາຊົນສອງປະເທດອ້າຍນ້ອງ ລາວ ແລະກຳປູເຈຍ ໃນການປົກປັກຮັກສາຄວາມສະຫງົບລວມຂອງ 3 ປະເທດ ພ້ອມນັ້ນກໍໄດ້ ເພີ່ມທະວີ ພັນທະພາບພິເສດໃນຫລາຍດ້ານ, ສ້າງທ່ວງທ່າໃຫມ່ເປັນຢ່າງດີ ໃນແຫລມອິນດູຈີນ.

ບັນດາຜົນສຳເລັດທີ່ກອງທັບ ແລະ ປະຊາຊົນຫວຽດນາມຍາດມາໄດ້ໃນການປະຕິ ບັດສອງຫນ້າທີ່ຍຸດທະສາດ, ການເພີ່ມທະວີການພົວພັນສາມັກຄີ ແລະການຮ່ວມມືຮອບດ້ານກັບສະຫະພາບໂຊວຽດ, ລາວ, ກຳປູເຈຍ, ກັບບັນດາປະເທດອ້າຍນ້ອງ ອື່ນຢູ່ໃນຄ້າຍ ສັງຄົມນິຍົມ, ການເສີມຂະຫຍາຍສາຍພົວພັນມິດຕະພາບ ແລະ ຮ່ວມມືກັບບັນດາປະເທດ ເອກະລາດ, ບັນດາກຳລັງທີ່ກ້າວຫນ້າ ແລະ ກຳລັງສັນຕິພາບ ໄດ້ເປັນປັດໄຈໃຫມ່ໃຫ້ແກ່ພາລະກິດປະຕິວັດຂອງປະຊາຊົນ ຫວຽດນາມ ສືບຕໍ່ກ້າວຂຶ້ນ.

ຜົນສຳເລັດຕ່າງໆທີ່ກ່າວມານັ້ນ ຕິດພັນກັບທັດສະນະອັນຖືກຕ້ອງຂອງ ແນວທາງລວມ ແລະ ແນວທາງເສດຖະກິດທີ່ໄດ້ກຳນົດຢູ່ໃນກອງປະຊຸມໃຫຍ່ຄັ້ງທີ IV ແລະຄັ້ງທີ V ຂອງພັກກອມມູນິດ ຫວຽດນາມ, ຕິດພັນກັບນະໂຍບາຍພາຍໃນ ແລະ ຕ່າງປະເທດອັນຖືກຕ້ອງ ຂອງພັກ ແລະ ລັດ ຫວຽດນາມ. ຜົນສຳເລັດເຫລົ່ານັ້ນຍັງແມ່ນຫມາກຜົນແຫ່ງການ ຕັ້ງຫນ້າອອກແຮງຢ່າງປະດິດສ້າງຂອງບັນດາອົງການຈັດຕັ້ງຂອງພັກ, ຂອງລັດ, ຂອງພະນັກງານ–ສະມາຊິກພັກ,ຂອງກອງທັບ ແລະ ປະຊາຊົນຫວຽດນາມທັງຫມົດ ໃນການປະ ຕິບັດແນວທາງນະໂຍບາຍຂອງພັກ ແລະ ລັດ. ພ້ອມກັນນັ້ນຜົນສຳເລັດດັ່ງກ່າວຍັງແມ່ນ ຫມາກຜົນແຫ່ງການຊ່ວຍເຫລືອຢ່າງສຸດອົກສຸດໃຈຂອງໂຊວຽດ, ຂອງບັນດາປະເທດອ້າຍນ້ອງອື່ນ

ແລະ ການສະໜັບສະໜູນຊ່ວຍເຫຼືອຂອງເພື່ອນມິດຢູ່ໃນໂລກ.

ຄຽງຄູ່ກັບການຢືນຢັນບັນດາຜົນສຳເລັດອັນໃຫຍ່ຫລວງທີ່ຍາດມາໄດ້ນັ້ນ ກອງປະຊຸມໃຫຍ່ຍັງໄດ້ຊີ້ອອກໃຫ້ເຫັນຂໍ້ຫຍຸ້ງຍາກ, ຈຸດອ່ອນ ແລະ ບັນຫາທີ່ຍັງຄົງຄ້າງເຊັ່ນ: ການຜະລິດເຖິງວ່າໄດ້ເພີ່ມຂຶ້ນ ແຕ່ການເພີ່ມນັ້ນ ແມ່ນຊັກຊ້າ ເມື່ອປຽບໃສ່ຄວາມອາດສາມາດ ທີ່ມີຢູ່ ແລະ ແຮງງານທີ່ໃຊ້ເຂົ້າສູ່ການຜະລິດ; ປະສິດທິຜົນຂອງການຜະລິດ ຂອງການລົງທຶນຍັງຕ່ຳ; ຊັບພະຍາກອນທຳມະຊາດຍັງບໍ່ທັນໄດ້ຖືກຂຸດຄົ້ນເປັນຢ່າງດີ ຊ້ຳບໍ່ຫນຳພັດຖືກ ນຳໃຊ້ແບບຟູມເຟືອຍ, ການຈໍລະຈອນບໍ່ທັນລື່ງລ່ຽນ, ການແຈກຢາຍຍັງສັບສົນ, ລາຄາ ສິນຄ້າແລ່ນຂຶ້ນໄວ; ການຂາດການດຸນດ່ຽງຂອງພື້ນຖານເສດຖະກິດຍັງໜັກໜ່ວງ ແລະ ແກ້ໄຂຍັງຊັກຊ້າ, ການພົວພັນການຜະລິດສັງຄົມນິຍົມໄດ້ຮັບການປັບປຸງຊັກຊ້າ; ຊີວິດການເປັນຢູ່ຂອງປະຊາຊົນ ໂດຍສະເພາະແມ່ນຂອງພະນັກງານ-ລັດຖະກອນ ຍັງພົບຂໍ້ຫຍຸ້ງຍາກຫລາຍ ແລະ ປາກົດການຫຍໍ້ທໍ້ໃນສັງຄົມໄດ້ມີການຂະຫຍາຍຕົວ.

ບັນດາຈຸດອ່ອນ ແລະ ຂໍ້ຄົງຄ້າງດັ່ງກ່າວນັ້ນ ແມ່ນເກີດມາຈາກຫລາຍສາຍເຫດ ນອກຕົວ ແລະ ໃນຕົວ ເປັນຕົ້ນແມ່ນການນຳພາຂອງພັກ ແລະ ການຄຸ້ມຄອງຂອງລັດຍັງໃນຕົວ, ສັບສົນ, ການປ່ຽນແປງກົນໄກຄຸ້ມຄອງຍັງຊັກຊ້າ...

ໄປພ້ອມໆກັບການຈຳແນກບັນດາຂໍ້ຜິດພາດ, ຈຸດອ່ອນ ແລະ ສາຍເຫດຂອງຂໍ້ຜິດພາດທີ່ພາໃຫ້ມີຈຸດອ່ອນນັ້ນ, ກອງປະຊຸມໃຫຍ່ໄດ້ຖອດຖອນບົດຮຽນທີ່ສຳຄັນດັ່ງນີ້ :

- ບົດຮຽນທີໜຶ່ງ: ໃນການເຄື່ອນໄຫວທັງໝົດຂອງຕົນນັ້ນ ພັກຕ້ອງກຳແໜ້ນ ແນວຄິດ "ເອົາປະຊາຊົນເປັນກົກ", ກໍ່ສ້າງ ແລະຂະຫຍາຍສິດເປັນເຈົ້າຂອງປະຊາຊົນຜູ້ອອກແຮງງານ.
- ບົດຮຽນທີ່ສອງ: ພັກຕ້ອງເລີ່ມຈາກຕົວຈິງຢູ່ສະເໝີ, ນັບຖື ແລະເຄື່ອນໄຫວຕາມກົດເກນພາວະວິໄສ.
- ບົດຮຽນທີສາມ: ຕ້ອງຮູ້ປະສານສົມທົບກຳລັງແຮງຂອງຊາດ ກັບກຳລັງແຮງ ຂອງຍຸກສະໄໝໃນເງື່ອນໄຂໃໝ່.
- ບົດຮຽນທີສີ່: ຕ້ອງກໍ່ສ້າງພັກໃຫ້ສົມກັບໜ້າທີ່ການເມືອງຂອງພັກ ທີ່ກຳ ອຳນາດເຊິ່ງນຳພາປະຊາຊົນດຳເນີນການປະຕິວັດສັງຄົມນິຍົມ.

ພາຍຫລັງທີ່ໄດ້ຈຳແນກສະພາບການພາຍໃນປະເທດ ແລະ ສາກົນໃນປັດຈຸບັນ ແລ້ວກອງປະຊຸມໃຫຍ່ໄດ້ຢືນຢັນວ່າ: ທົ່ວພັກ, ທົ່ວປວງຊົນ ແລະ ບັນດາກຳລັງປະກອບ ອາວຸດ

ຫວຽດນາມ ສາມັກຄີເປັນຈິດຫນຶ່ງໃຈດຽວກັນ, ຕັດສິນໃຈເຮັດສຸດຄວາມສາມາດຂອງ ຕົນ ສືບຕໍ່ປະຕິບັດສອງຫນ້າທີ່ຍຸດທະສາດ ຄື ກໍ່ສ້າງສັງຄົມນິຍົມ ໃຫ້ສຳເລັດ ແລະ ປົກປັກ ຮັກສາປະເທດ ຫວຽດນາມ ສັງຄົມນິຍົມ ຢ່າງຫມັ້ນຄົງ ພ້ອມນັ້ນກໍ່ຕັ້ງຫນ້າປະກອບສ່ວນເຂົ້າໃນການຕໍ່ສູ້ລວມ ເພື່ອສັນຕິພາບ, ເອກະລາດແຫ່ງຊາດ, ປະຊາທິປະໄຕ ແລະ ສັງຄົມນິຍົມ ຂອງບັນດາປະຊາຊາດໃນໂລກ.

ປະຊາຊົນ ຫວຽດນາມ ຕັດສິນໃຈສືບຕໍ່ເຮັດສຸດຄວາມສາມາດຂອງຕົນ ເພື່ອເພີ່ມທະວີຄວາມສາມັກຄີສູ້ຮົບ, ເຊີດຊູຄຸນນະພາບ ແລະ ປະສິດທິຜົນຂອງການຮ່ວມມືຮອບດ້ານ ກັບສະຫະພາບໂຊວຽດ ແລະ ປະເທດສັງຄົມນິຍົມອື່ນໆ, ປັບປຸງ ແລະເສີມຂະຫຍາຍພົນ ທະພາບແບບພິເສດກັບສອງປະເທດລາວ ແລະ ກຳປູເຈຍ, ຖືເອົາອັນນັ້ນເປັນພົນທະສາກົນທີ່ສັກກະລະບູຊາ, ເປັນຫນ້າທີ່ ທີ່ມີຄວາມຫມາຍສຳຄັນ ຍຸດທະສາດ ຕິດພັນກັບຜົນປະໂຫຍດທີ່ເປັນຕາຍຂອງເອກະລາດ, ອິດສະລະພາບ ແລະ ສັງຄົມນິຍົມຢູ່ ຫວຽດນາມ ແລະ ທົ່ວແຫລມອິນດູຈີນ.

ເພື່ອພາລະກິດປົກປັກຮັກສາປະເທດຊາດນັ້ນ ທົ່ວພັກ, ທົ່ວປວງຊົນ ແລະ ບັນດາ ກຳລັງປະກອບອາວຸດ ຫວຽດນາມ ຈະເສີມຂະຫຍາຍທຸກກຳລັງແຮງສັງລວມຂອງປະເທດຊາດ ແລະ ສັງຄົມ, ຕັດສິນໃຈຕີເອົາຊະນະສົງຄາມທຳລາຍຫລາຍດ້ານຂອງສັດຕູ,ພ້ອມກັນນັ້ນກໍ່ມີແຜນການກຽມພ້ອມເອົາຊະນະການປະເຊີນຫນ້າກັບທຸກສະພາວະການທີ່ສັດຕູກໍ່ຂຶ້ນ.

ໄຊຊະນະຂອງພາລະກິດປົກປັກຮັກສາປະເທດຊາດ ຕ້ອງໄດ້ຮັບການຮັບປະກັນດ້ວຍກຳລັງແຮງສັງລວມຂອງລະບອບໃຫມ່. ໃນຂະນະທີ່ເອົາໃຈໃສ່ຫນ້າທີ່ປົກປັກຮັກສາ ປະເທດຊາດຢ່າງສະຫມ່ຳສະເຫມີນັ້ນ ພັກກອມມູນິດ ຫວຽດນາມ ແລະ ປະຊາຊົນ ຫວຽດນາມສືບຕໍ່ຖືເອົາຫນ້າທີ່ກໍ່ສ້າງສັງຄົມນິຍົມ, ກໍ່ສ້າງລະບອບເປັນເຈົ້າລວມຫມູ່, ກໍ່ສ້າງເສດ ຖະກິດໃຫມ່, ພົ້ນຖານວັດທະນະທຳໃຫມ່ ແລະ ຄົນໃຫມ່ສັງຄົມນິຍົມ ເປັນຫນ້າທີ່ສຳຄັນ ອັນດັບຫນຶ່ງ.

ກອງປະຊຸມໃຫຍ່ ໄດ້ວາງບັນດາແຜນນະໂຍບາຍ ແລະ ຫນ້າທີ່ໃຫຍ່ໃນຊຸມປີທີ່ຍັງເຫຼືອຂອງໄລຍະທາງທຳອິດ ເຊິ່ງທົ່ວພັກ,ທົ່ວປວງຊົນຈະຕ້ອງສຸມໃສ່ປະຕິບັດນັ້ນແມ່ນ :

1/- ເຮັດໃຫ້ສະພາວະການເສດຖະກິດສັງຄົມເປັນປົກກະຕິໃນທຸກດ້ານ ເຊິ່ງປະກອບດ້ວຍການຂະຫຍາຍການຜະລິດ, ການຈຳລະຈອນແຈກຢາຍ, ການປົວແປງຊີວິດການເປັນຢູ່ຂອງປະຊາຊົນ ພິເສດຕ້ອງກໍ່ສ້າງ ແລະ ຈັດຕັ້ງປະຕິບັດ 3 ຈຸດຫມາຍໂຄງການດ້ານ ທັນ

ຢາຫານ ແລະ ອາຫານ, ດ້ານສິນຄ້າໃຊ້ສອຍ ແລະ ສິນຄ້າຂາອອກ.

ອັນນັ້ນແມ່ນເນື້ອໃນຕົ້ນຕໍຂອງແຜນການ 5 ປີ 1986-1990 ທີ່ຈະຕ້ອງ ໄດ້ ສຸມໃສ່ ຢ່າງສຸດຂີດ ທັງດ້ານວັດຖຸ ຊັບສິນ ແລະ ແຮງງານຄົນໃຫ້ບັນລຸຜົນສຳເລັດ.

2/- ປະຕິບັດຫນ້າທີ່ດັດສ້າງສັງຄົມນິຍົມ ດ້ວຍຮູບການ ແລະ ບາດກ້າວທີ່ສອດຄ່ອງ.

3/- ດັດແປງກົນໄກຄຸ້ມຄອງເສດຖະກິດ.

4/- ແກ້ໄຂບັນຫາທີ່ເຄັ່ງຮ້ອນ ກ່ຽວກັບການຈໍລະຈອນແຈກຢາຍໃຫ້ໄດ້.

5/- ກໍ່ສ້າງ ແລະ ຈັດຕັ້ງປະຕິບັດບັນດານະໂຍບາຍທາງສັງຄົມຢ່າງມີປະສິດທິຜົນ.

6/- ເພີ່ມທະວີຄວາມສາມາດໃນການປ້ອງກັນຊາດ ແລະປ້ອງກັນຄວາມສະຫງົບຂອງປະເທດຊາດ.

7/- ເພີ່ມທະວີການເຄື່ອນໄຫວໃນຂົງເຂດການຕ່າງປະເທດ.

8/- ເສີມຂະຫຍາຍສິດເປັນເຈົ້າລວມຫມູ່ຂອງປະຊາຊົນຊາວຜູ້ອອກແຮງງານ,ຍົກສູງປະສິດທິພາບໃນການຄຸ້ມຄອງຂອງລັດ.

9/- ກໍ່ສ້າງພັກໃຫ້ເຫມາະສົມຢ່າງແທ້ຈິງ ທີ່ເປັນພັກກຳອຳນາດ ເຮັດຫນ້າທີ່ສຳ ຄັນ ໃນການນຳພາທົ່ວປວງຊົນ ປະຕິບັດສອງຫນ້າທີ່ຍຸດທະສາດ ກໍ່ສ້າງສັງຄົມນິຍົມ ແລະປົກປັກຮັກສາປະເທດຊາດ.

10/- ເຊີດຊູປະສິດທິພາບ ໃນການຊີ້ນຳ ແລະບັນຊາ, ປຸກລະດົມຂະບວນການ ມະຫາຊົນຢ່າງແຂງແຮງ ປະຕິບັດທຸກແນວທາງນະໂຍບາຍຂອງພັກ ແລະ ລັດໃຫ້ສຳເລັດຜົນ.

ເພື່ອປະຕິບັດບັນດາມະຕິທີ່ສຳຄັນດັ່ງກ່າວນັ້ນໃຫ້ສຳເລັດຜົນ ກອງປະຊຸມໃຫຍ່ໄດ້ ເນັ້ນຫນັກວ່າ ຕ້ອງໄດ້ດັດແປງແບບແຜນການນຳພາຂອງພັກ ຕາມຈິດໃຈປະຕິວັດ ແລະ ວິ ທະຍາສາດ, ປັບປຸງວຽກງານຊີ້ນຳບັນຊາ, ວຽກງານຈັດຕັ້ງປະຕິບັດຂອງພັກ ແລະ ລັດ ໃຫ້ໄດ້ ພິເສດແມ່ນຕ້ອງກຳແຫນ້ນບາງຂອດດັ່ງນີ້: ມີນະໂຍບາຍຖືກຕ້ອງ, ປັບປຸງດັດແປງລະບົບກົງຈັກ, ດັດແປງວຽກງານຈັດຕັ້ງ, ເລືອກເຟັ້ນ ແລະ ສັບຊ້ອນພະນັກງານທີ່ມີ ຄວາມສາມາດຢ່າງຖືກຕ້ອງ, ມີຄຸນສົມບັດ ແລະ ຈິນຕະນາການໃຫມ່; ກໍ່ສ້າງຄວາມເປັນ ລະບຽບຮຽບຮ້ອຍ, ລະບຽບວິໄນ, ເຮັດໃຫ້ບັນດາອົງການຈັດຕັ້ງພັກ ແລະ ລັດຂາວສະອາດ, ເຮັດໃຫ້ຊີວິດສັງຄົມປອດໃສ, ສ້າງຂະບວນການການເຄື່ອນໄຫວປະຕິວັດຂອງ ມະຫາຊົນຢ່າງກວ້າງຂວາງ ຟົດຟື້ນ.

ກອງປະຊຸມໃຫຍ່ຄັ້ງທີ VI ຂອງພັກກອມມູນິດ ຫວຽດນາມ ແມ່ນການສະແດງ ອອກ

ຢ່າງສູງສົ່ງ ເຖິງຈິດໃຈສາມັກຄີ ເປັນເອກະພາບຂອງພັກ, ຕັດສິນໃຈນໍາພາປະຊາຊົນປະຕິບັດສອງໜ້າທີ່ຍຸດທະສາດໃຫ້ສໍາເລັດຜົນ ແລະ ເຮັດຫລ້ອນພັນທະສາກົນ.

ກອງປະຊຸມໃຫຍ່ຄັ້ງທີ VI ແມ່ນບາດກ້າວການເຕີບໃຫຍ່ໃໝ່ຂອງພັກ ຕາມທິດປ່ຽນແປງຈິນຕະນາການ ໂດຍສະເພາະແມ່ນຈິນຕະນາການເສດຖະກິດ, ການປ່ຽນແປງ ແບບແຜນ, ປ່ຽນແປງວຽກງານຈັດຕັ້ງ ແລະ ພະນັກງານ.

ບັນດາມະຕິຂອງກອງປະຊຸມໃຫຍ່ຄັ້ງທີ VI ຂອງພັກກອມມູນິດ ຫວຽດນາມແມ່ນການສະແດງອອກຂອງສະຕິປັນຍາຂອງທົ່ວພັກ, ທົ່ວປວງຊົນໃນການສືບຕໍ່ເຮັດໃຫ້ແນວທາງລວມຂອງສະໄໝຂ້າມຜ່ານ ແລະ ແນວທາງກໍ່ສ້າງພື້ນຖານເສດຖະກິດ ສັງຄົມນິຍົມທີ່ໄດ້ກໍານົດຢູ່ໃນກອງປະຊຸມໃຫຍ່ຄັ້ງທີ IV ແລະ ທີ V ຂອງພັກນັ້ນ ກາຍເປັນອັນລະອຽດຕື່ມເພື່ອເດັດດ່ຽວຜ່ານຜ່າທຸກຄວາມຫຍຸ້ງຍາກ ແລະການທົດສອບ ນໍາເອົາພາລະກິດປະຕິວັດ ກ້າວຂຶ້ນອີກບາດກ້າວໃໝ່ ທີ່ໃຫຍ່ຫລວງ.

ພັກປະຊາຊົນ ປະຕິວັດລາວ ແລະ ປະຊາຊົນລາວບັນດາເຜົ່າ ພວກເຮົາສຸດທີ່ມີຄວາມປິຕິຊົມຊື່ນ ຕໍ່ຜົນສໍາເລັດອັນສະຫງ່າງາມ ຂອງກອງປະຊຸມໃຫຍ່ຄັ້ງທີ VI ຂອງພັກກອມມູນິດ ຫວຽດນາມ ຜູ້ສະຫງ່າອົງອາດ . ຜົນສໍາເລັດດັ່ງກ່າວ ໄດ້ໄຂຄວາມຫວັງ ອັນໃຫຍ່ຫລວງ ໃຫ້ແກ່ການຂຸດຄົ້ນ ທຸກຄວາມອາດສາມາດ ບົ່ມຊ້ອນຂອງປະເທດ ຫວຽດນາມຢ່າງມີປະສິດທິຜົນຕື່ມອີກ ແລະ ການເສີມຂະຫຍາຍ ຫົວຄິດປະດິດສ້າງ ຂອງປະຊາຊົນ ຫວຽດນາມ ອ້າຍນ້ອງ ໃຫ້ແຂງແຮງຍິ່ງຂຶ້ນ ເພື່ອຊຸກຍູ້ ເສດຖະກິດແຫ່ງຊາດ ຫວຽດນາມ ໃຫ້ຂະຫຍາຍຕົວ ດ້ວຍຈັງຫວະໄວ , ໝັ້ນທ່ຽງ ແລະ ໜັກແໜ້ນ , ເຮັດໃຫ້ ຫວຽດນາມ ສົມກັບບົດບາດ ເປັນຫລັກແຫລ່ງ ແຫ່ງການຮ່ວມສໍາພັນ ຍຸດທະສາດລະຫວ່າງ 3 ປະເທດ ໃນອິນດູຈີນ ຕະຫລອດໄປ , ປະກອບສ່ວນເຂົ້າໃນການເພີ່ມທະວີ ຄວາມເຂັ້ມແຂງ ແຮງກ້າຂອງວົງຄະນາຍາດ ສັງຄົມນິຍົມ ແລະ ໃນການປົກປັກຮັກສາ ສັນຕິພາບ ,ສະຖຽນລະພາບ ໃນອາຊີອາຄະເນ ແລະ ໃນໂລກ . ພວກເຮົາຂໍອວຍພອນ ອັນອົບອຸ່ນໄປຍັງ ພັກກອມມູນິດ ຫວຽດນາມ ຜູ້ ຈັດຕັ້ງ ແລະ ນໍາພາ ທຸກໄຊຊະນະ ຂອງການປະຕິວັດຫວຽດນາມ , ຂໍອວຍພອນ ໃຫ້ປະຊາຊົນ ຫວຽດນາມ ອ້າຍນ້ອງ ເຊິ່ງພາຍໃຕ້ແສງ ສະຫວ່າງຂອງມະຕິກອງປະຊຸມໃຫຍ່ ຄັ້ງທີ VI ຂອງພັກ, ພາຍໃຕ້ການນໍາພາ ອັນສະຫລາດສ່ອງໃສ ຂອງຄະນະ ບໍລິຫານງານ ສູນກາງພັກ ກອມມູນິດ ຫວຽດນາມ ໂດຍແມ່ນ ສະຫາຍ ຫງວຽນວັນລິນ ເປັນເລຂາທິການໃຫຍ່ ຈົ່ງຍາດເອົາໄຊຊະນະ ອັນຍິ່ງໃຫຍ່ກວ່າເກົ່າ ໃນ

ພາລະກິດກໍ່ສ້າງ ສັງຄົມນິຍົມ, ໃນການປົກປັກຮັກສາ ປະເທດຊາດ ແລະ ເຮັດ ສຳເລັດ ພັນທະ ສາກົນ ທີ່ສະຫງ່າງາມ ຂອງຕົນ ./.

*

*    *

# ກໍ່ສ້າງຖັນແຖວ ພະນັກງານ–ສະມາຊິກພັກ

# ເຂັ້ມແຂງ ເພື່ອປະຕິບັດບັນດາມະຕິຂອງພັກຢ່າງມີໄຊ

*ຫນູນແກ້ວ ອໍລະບູນ*

ໃນພາລະກິດປະຕິວັດຂອງພັກນັ້ນຖັນແຖວ ພະນັກງານ-ສະມາຊິກພັກ ແມ່ນມີບົດບາດສຳຄັນທີ່ສຸດ. ໃນພຶດຕິກຳຕົວຈິງໄດ້ພິສູດ ໃຫ້ເຫັນວ່າ: ບໍ່ວ່າໄລຍະການປະຕິວັດໃດຄວາມເຂັ້ມແຂງຂອງຖັນແຖວພະນັກງານ-ສະມາຊິກ ພັກ ແມ່ນປັດໄຈຕັດສິນຄວາມແຂງແກ່ນຂອງພັກ .

ປັດຈຸບັນນີ້ ພັກເຮົາພວມຮັບຜິດຊອບ ບັນດາຫນ້າທີ່ອັນຫນັກຫນ່ວງຂອງພາລະກິດປົກປັກຮັກສາປະເທດຊາດ ແລະກໍ່ສ້າງສັງຄົມນິຍົມ, ເພື່ອປະຕິບັດພາລະກຳປະຫວັດສາດ ດັ່ງກ່າວຢ່າງມີໄຊນັ້ນ ເງື່ອນໄຂຕັດສິນອັນທຳອິດແມ່ນພັກຕ້ອງຮູ້ນຳໃຊ້ບັນດາຫລັກມູນຂອງລັດທິມາກ-ເລນິນ ເຂົ້າໃສ່ສະພາບຕົວຈິງຂອງການປະຕິວັດປະເທດເຮົາຢ່າງປະດິດສ້າງ, ກຳນົດແນວທາງການເມືອງປະຕິວັດອອກຢ່າງຖືກຕ້ອງ . ມະຕິກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກແມ່ນຜົນແຫ່ງການສົມທົບຢ່າງຖືກຕ້ອງລະຫວ່າງທິດສະດີມາກ-ເລນິນ ກັບພຶດຕິກຳປະຕິວັດ ຂອງປະເທດເຮົາ, ເປັນທວນໄຟເຍືອງທາງ ໃຫ້ແກ່ປະຊາຊົນເຮົາກ້າວຂຶ້ນຕາມເສັ້ນທາງ ກໍ່ສ້າງສັງຄົມນິຍົມ. ແຕ່ວ່າມີພຽງແຕ່ແນວທາງການປະຕິວັດຖືກຕ້ອງເທົ່ານັ້ນ ກໍ່ບໍ່ທັນສາມາດສ້າງເປັນໄຊຊະນະຂອງການປະຕິວັດໄດ້, ຫຼັງຈາກມີແນວທາງອັນຖືກຕ້ອງແລ້ວ ພັກຍັງຕ້ອງຈັດຕັ້ງປະຕິບັດໃຫ້ດີ, ຮັບປະກັນ ໃຫ້ແກ່ແນວທາງຂອງພັກກາຍເປັນອັນລະອຽດ ໃນຊີວິດ. ຢາກເຮັດໄດ້ແນວນັ້ນ ບັນຫາທີ່ມີຄວາມຫມາຍຕັດສິນແມ່ນພັກຕ້ອງກໍ່ສ້າງຖັນແຖວພະນັກງານ-ສະມາຊິກພັກເຂັ້ມແຂງ ມີຄຸນທາດປະຕິວັດ ແລະມີຄວາມສາມາດ, ເປັນນັກຮົບກອມມູນິດທີ່ຊື່ສັດບໍລິສຸດຕໍ່ພາລະກິດປະຕິວັດຂອງພັກ, ເດັດດ່ຽວນຳເອົາໄຊຊະນະມາໃຫ້ການປະຕິວັດ .

ຫວນຄືນໃນໄລຍະ 10 ປີກ່ວາຜ່ານ ມາ ນັບແຕ່ປະເທດຊາດໄດ້ຮັບການປົດປ່ອຍຢ່າງ ສົມບູນ ມາເຖິງປັດຈຸບັນ ຖັນແຖວພະນັກງານ ສະມາຊິກພັກ ໄດ້ເພີ່ມຂຶ້ນໄວພໍສົມຄວນ ແລະ ມີບາດກ້າວເຕີບໃຫຍ່ຂຶ້ນ ທາງດ້ານການ ຄຸ້ມຄອງເສດຖະກິດ, ຄຸ້ມຄອງສັງຄົມ. ໃນເງື່ອນໄຂພັກນຳພາອຳນາດການປົກຄອງນັ້ນ ພະນັກງານ-ສະມາຊິກພັກສ່ວນຫລາຍໄດ້ຮັກສາ ຄຸນສົມບັດປະຕິວັດ, ມີມານະຈິດຕໍ່ສູ້ປະຕິວັດ ອັນກ້າແກ່ນ, ມີສະຕິຕໍ່ການຈັດຕັ້ງ, ລະບຽບວິໄນເຂັ້ມງວດ, ດຳລົງຊີວິດປອດໃສ ແລະ ງ່າຍດາຍອັນໄດ້ຮັບຄວາມນັບຖືຮັກແພງຈາກມະຫາຊົນ.

ແຕ່ຜ່ານການທົດສອບໃນການຕໍ່ສູ້ ໃນໄລຍະໃຫມ່ ມີພະນັກງານ-ສະມາຊິກພັກຈຳນວນບໍ່ຫນ້ອຍ ໄດ້ເສື່ອມເສຍຄຸນສົມບັດປະຕິວັດ , ຍິງໄປກ່ວານັ້ນ ຈຳນວນຫນຶ່ງ ໄດ້ ເສື່ອມຄຸນປ່ຽນທາດ ອັນໄດ້ເປັນຜົນສະທ້ອນບໍ່ດີ ເຖິງການປະຕິບັດບັນດາຫນ້າທີ່ການເມືອງຂອງພັກ, ບົດບາດນຳພາ ແລະຄວາມເຊື່ອຫມັ້ນຂອງພັກ, ຂອງລັດ, ເຖິງການພົວພັນລະຫວ່າງພັກ ກັບມະຫາຊົນ.

ເພື່ອຍົກສູງບົດບາດນຳພາ ແລະ ກຳລັງແຮງຕໍ່ສູ້ຂອງພັກ, ຄວາມຮຽກຮ້ອງຕ້ອງການອັນສຳຄັນ ໃນປັດຈຸບັນ ແມ່ນຕ້ອງຍົກສູງ ຄຸນນະພາບຂອງສະມາຊິກພັກ. ດ້ານຫນຶ່ງຕ້ອງຍົກສູງຄຸນສົມບັດປະຕິວັດ ແລະຄວາມສາມາດຂອງຖັນແຖວພະນັກງານ-ສະມາຊິກພັກ. ການຍົກສູງຄຸນນະພາບຂອງສະມາຊິກພັກນັ້ນ ຕ້ອງດຳເນີນ 3 ວິທີການໄປຄຽງຄູ່ກັນ: ບຳລຸງສະມາຊິກພັກຜ່ານວຽກງານ, ການຮ່ຳຮຽນ , ການຕຳນິຕົນເອງ ຕຳນິຫມູ່ຄູ່ ແລະ ການດຳເນີນຊີວິດພັກ, ຮັບເອົາສະມາຊິກໃຫມ່ ແລະ ເອົາຜູ້ບໍ່ຄົບມາດຖານສະມາຊິກພັກອອກ ຈາກພັກ.

ວຽກງານສຶກສາອົບຮົມບຳລຸງສະມາ ຊິກພັກ ແມ່ນມີຫລາຍດ້ານ: ອົບຮົມທິດສະດີມາກ-ເລນິນ, ສະພາບການ ແລະຫນ້າທີ່ປະຕິວັດ, ອົບຮົມແນວທາງ, ນະໂຍບາຍຂອງພັກ, ບຳລຸງບັນດາຄວາມຮູ້ທາງດ້ານວັດທະນະທຳ, ວິຊາສະເພາະ-ເຕັກນິກ, ຍົກສູງຄຸນສົມບັດ ທາດແທ້ປະຕິວັດ. ພິເສດແມ່ນຕ້ອງເອົາໃຈໃສ່ອົບຮົມຍົກສູງສະຕິຕໍ່ອຸດົມການກອມມູນິດ ເຊິ່ງເວລາໃດກໍ່ແມ່ນຄຸນທາດອັນສຳຄັນທຳອິດ, ມັນແມ່ນ "ຄຸນທາດຂອງທຸກໆຄຸນທາດ", ແມ່ນຄຸນສົມບັດຕົ້ນຕໍຂອງສະມາຊິກພັກ, ແມ່ນກຳລັງດັນຊຸກຍູ້ໃຫ້ແກ່ສະມາຊິກພັກ ຜ່ານຜ່າ ທຸກຄວາມຫຍຸ້ງຍາກ, ທຸກການທົດສອບເພື່ອສຳເລັດ ທຸກຫນ້າທີ່ວຽກງານທີ່ພັກໄດ້ມອບຫມາຍໃຫ້; ມັນຍັງແມ່ນບັນຫາພື້ນຖານກ່ວາຫມູ່ ເພື່ອຈຳແນກເຂດແດນລະຫວ່າງສະມາຊິກພັກກັບຄົນ ນອກພັກ. "ສະມາຊິກພັກແມ່ນຈະຢູ່ໃນ ຕຳແຫນ່ງວຽກງານໃດກໍ່ຕາມ ຕ້ອງແມ່ນນັກຮົບກອມມູນິດ ທີ່ມີອຸດົມຄະຕິ ແລະມີການກະທຳ ຕາມ

ແນວທາງຂອງພັກ...".

ໃນໄລຍະການປະຕິວັດປັດຈຸບັນນີ້ ຄວາມຕື່ນຕົວດ້ານອຸດົມຄະຕິກອມມູນິດ ຮຽກຮ້ອງສະມາຊິກພັກຕ້ອງຍົກສູງມານະຈິດປະຕິວັດອັນກ້າແກ່ນ, ເດັດດ່ຽວຕໍ່ສູ້ຍາດເອົາໄຊຊະນະ ມາໃຫ້ພາລະກິດປົດປ່ອຍ ແລະ ກໍ່ສ້າງສັງຄົມ ນິຍົມຢູ່ປະເທດເຮົາ, ກຽມພ້ອມຕໍ່ສູ້ຢ່າງຕື່ນຕົວຕ້ານກັບທຸກເລ່ກົນ ແລະການກະທຳ ທຳລາຍມ້າງເພຂອງສັດຕູ ປົກປັກຮັກສາປະເທດຊາດ, ປົກປັກຮັກສາບັນດາໝາກຜົນຂອງການປະ ຕິວັດ ແລະ ກຽມພ້ອມເຮັດຫລ້ອນພັນທະສາກົນຂອງພັກ ເຊິ່ງຕົວຈິງໃນປັດຈຸບັນນີ້ ແມ່ນຕ້ອງເຊື່ອມຊຶມແນວທາງປົກປັກຮັກສາປະເທດຊາດ ແລະ ກໍ່ສ້າງສັງຄົມນິຍົມຂອງພັກ, ປະຕິບັດຕາມມະຕິກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກຢ່າງເຂັ້ມງວດ. ມານະຈິດຕໍ່ສູ້ຂອງສະມາຊິກພັກ ບໍ່ພຽງແຕ່ສະແດງອອກໃນການຫ້າວ ຫັນປະຕິວັດເທົ່ານັ້ນ ຫາກຍັງຕ້ອງສະແດງ ອອກໃນການເອົາໃຈໃສ່ຍົກສູງຄວາມຮູ້ແລະຄວາມສາມາດໃນວຽກງານຕື່ມອີກ ເພາະວ່າ ຖ້າຂາດສິ່ງດັ່ງກ່າວນັ້ນແລ້ວກໍ່ຈະບໍ່ສາມາດ ສຳເລັດໜ້າທີ່ຂອງຕົນເປັນຢ່າງດີ, ຈະບໍ່ ສາມາດກໍ່ສ້າງສັງຄົມນິຍົມຢ່າງສຳເລັດຜົນໄດ້.

ການກໍ່ສ້າງສັງຄົມນິຍົມ ແມ່ນພາລະ ກິດອັນສະຫວ່າງສະໄຫວ ແຕ່ມັນກໍ່ເຕັມໄປ ດ້ວຍຄວາມຫຍຸ້ງຍາກລຳບາກ ເປັນຕົ້ນແມ່ນຕໍ່ ກັບປະເທດທີ່ມີຈຸດພິເສດຄືປະເທດເຮົາ. ການຕື່ນຕົວດ້ານອຸດົມຄະຕິກອມມູນິດ ຮຽກຮ້ອງສະມາຊິກພັກ ເຖິງວ່າຈະຢູ່ໃນສະພາວະການໃດ ກໍ່ຕາມ ຕ້ອງຮັກສາຄວາມບໍລິສຸດ, ນ້ຳໃຈເຊື່ອໝັ້ນຢ່າງເດັດດ່ຽວຕໍ່ການນຳພາຂອງພັກ, ຕໍ່ໄຊຊະນະຂອງການປະຕິວັດ ແລະບໍ່ຫວັ່ນໄຫວຄອນແຄນ.

ດຽວນີ້ ພັກເຮົາໄດ້ກາຍເປັນພັກ ນຳພາອຳນາດການປົກຄອງໃນທົ່ວປະເທດ, ຄວາມຕື່ນຕົວດ້ານອຸດົມຄະຕິກອມມູນິດ ຮຽກຮ້ອງສະມາຊິກຕ້ອງສືບຕໍ່ຮັກສາຄຸນສົມບັດທາດແທ້ຂອງນັກຮົບກອມມູນິດ, ຮັກສາແບບດຳລົງຊີວິດປອດໃສ ແລະງ່າຍດາຍ, ບໍ່ສວຍໃຊ້ສິດ ອຳນາດເຮັດສິ່ງທີ່ຜິດ ແລະກົງກັນຂ້າມ, ບໍ່ປະປ່ອຍໃຫ້ຄວາມໂລບມາກໂລພາ ທາງດ້ານວັດຖຸ ຕ່ຳຕ້ອຍແກ່ດົງໃຫ້ກາຍເປັນຜູ້ບໍ່ດີ. ໃນພຶດຕິ ກຳຕົວຈິງໄດ້ຊີ້ໃຫ້ເຫັນວ່າ ບັນດາພະນັກງານ - ສະມາຊິກພັກໄດ້ຜ່ານການຕໍ່ສູ້ຢ່າງພິລະ ອາດຫານ ໃນໄລຍະການປະຕິວັດກ່ອນນີ້ ແຕ່ຍ້ອນຂາດການບຳລຸງຝຶກຝົນຕົນເອງ, ບໍ່ຮັກສາ ຄຸນສົມບັດ ແລະການດຳລົງຊີວິດອັນຂາວສະອາດ ມາເຖິງດຽວນີ້ກໍ່ໄດ້ກາຍເປັນຜູ້ເສື່ອມຄຸນປ່ຽນທາດ.

ພວກເຮົາຕ້ອງຈື່ຈຳເລື່ອງວ່າ: ການປະຕິວັດແມ່ນພາລະກິດຂອງມະຫາຊົນ, ມະຫາຊົນແມ່ນຜູ້ປະດິດສ້າງປະຫວັດສາດ "ນັກກອມ ມູນິດທັງຫລາຍພຽງແຕ່ແມ່ນຢອດນ້ຳຢອດ ໜຶ່ງໃນມະຫາສະໝຸດ " ດັ່ງທ່ານ ເລນິນ ໄດ້

ສອນວ່າ: ໃນເງື່ອນໄຂພັກນຳພາ ອຳນາດການປົກຄອງນັ້ນ ສະມາຊິກພັກທຸກຄົນຕ້ອງໃກ້ຊິດຕິດແທດກັບມະຫາຊົນ, ຮັກສາການພົວພັນລະຫວ່າງພັກ ກັບມະຫາຊົນ, ເຄົາລົບ ນັບຖືແລະຂະຫຍາຍສິດເປັນເຈົ້າຂອງມະຫາຊົນ ; ຕ້ອງຕໍ່ສູ້ຕຳນິວິຈານພະຍາດອາດຍາສິດ, ຄຳສັ່ງ, ຫ່າງເຫີນມະຫາຊົນ, ບໍ່ເຄົາລົບນັບຖືມະຫາຊົນ ແລະບໍ່ເປັນຫ່ວງເປັນໃຍນຳຊີວິດຂອງມະຫາຊົນ.

ຄວາມຕື່ນຕົວ ດ້ານອຸດົມຄະຕິ ກອມມູນິດ ຮຽກຮ້ອງ ສະມາຊິກພັກ ບໍ່ພຽງແຕ່ ຕ້ອງຂະຫຍາຍບົດບາດນຳໜ້າເປັນແບບຢ່າງໃນ ທຸກການເຄື່ອນໄຫວເທົ່ານັ້ນ ຫາກຍັງຕ້ອງ ຕັ້ງໜ້າຕໍ່ສູ້ຕ້ານບັນດາປະກົດການຫຍໍ້ທໍ້, ປົກປັກຮັກສາແນວທາງນະໂຍບາຍຂອງພັກ, ຮັບປະກັນໃຫ້ກົດລະບຽບຂອງພັກ ແລະ ກົດໝາຍຂອງລັດໄດ້ຮັບການປະຕິບັດຢ່າງເຂັ້ມງວດ .

ບັນດາການຈັດຕັ້ງພັກ ເປັນຕົ້ນແມ່ນການຈັດຕັ້ງພັກຢູ່ຮາກຖານ ຕ້ອງມີວິທີການອົບຮົມ ລະອຽດ ໃຫ້ແກ່ສະມາຊິກພັກຕໍ່ສູ້ຝຶກຝົນ ຕົນເອງ ທັງຍົກສູງຄຸນສົມບັດທາດແທ້ ປະຕິວັດ ແລະ ຄວາມສາມາດໃນວຽກງານ, ທັງປ່ຽນແປງຂໍ້ຂາດຕົກບົກພ່ອງຂອງຕົນ. ຄວາມຮຽກຮ້ອງຕ້ອງການອັນໜຶ່ງທີ່ສຳຄັນ ແມ່ນຕ້ອງດຳເນີນການຕຳນິຕົນເອງ ແລະ ຕຳນິກັນຢ່າງ ເປັນປົກກະຕິ ຢູ່ໃນການດຳເນີນຊີວິດໜ່ວຍພັກ , ຍ້ອງຍໍຊົມເຊີຍຢ່າງທັນການ ຕໍ່ບັນດາ ສະມາຊິກພັກ ທີ່ປະພຶດຕົນເປັນແບບຢ່າງທຸກດ້ານໃນການເຄື່ອນໄຫວ ແລະ ຕໍ່ສູ້ຕຳນິວິຈານ ຢ່າງທັນການບັນດາແນວຄິດ ແລະການເຄື່ອນໄຫວທີ່ຜິດພາດ. ຕໍ່ພະນັກງານ-ສະມາຊິກພັກ ທີ່ມີຄວາມຜິດພາດນັ້ນ ຕ້ອງປະຕິບັດລະບຽບຢ່າງເໝາະສົມ ຖືກລະດັບ, ບໍ່ປັນເປປິດບັງ. ມີແຕ່ເຮັດແນວນັ້ນ ຈຶ່ງຈະສຶກສາອົບຮົມຜູ້ທີ່ມີຄວາມຜິດພາດໄດ້, ສຶກສາອົບຮົມພະນັກງານ, ສະມາຊິກພັກຜູ້ອື່ນໆ, ຮັກສາກົດລະບຽບອັນເຂັ້ມງວດຂອງພັກ.

ເພື່ອຍົກສູງຄຸນນະພາບຂອງສະມາຊິກພັກນັ້ນ ຄຽງຄູ່ກັບຄວາມເອົາໃຈໃສ່ສຶກສາອົບຮົມສະມາຊິກພັກ ຕ້ອງເອົາໃຈໃສ່ເຮັດວຽກງານຂະຫຍາຍພັກໃຫ້ດີ ແລະ ເດັດດ່ຽວເອົາພາກສ່ວນເສື່ອມຄຸນປ່ຽນທາດ, ຜູ້ທີ່ບໍ່ມີ ມາດຖານສະມາຊິກພັກຄົບຖອນອອກຈາກພັກ.

ມີການຂະຫຍາຍພັກ ຈຶ່ງຈະ ເປີດກ້ວາງຖັນແຖວຂອງພັກ, ເພີ່ມເຕີມກຳລັງໃໝ່ ໃຫ້ແກ່ພັກ, ຮັບປະກັນໃຫ້ແກ່ການນຳພາຂອງພັກໄດ້ເປີດກ້ວາງອອກ ແລະ ເພີ່ມທະວີຢູ່ໃນທຸກ ທຸກບ່ອນ ທຸກຂົງເຂດ. ເຮັດວຽກງານ ຂະຫຍາຍພັກໄດ້ດີ ມັນຍັງປະກອບສ່ວນເພີ່ມທະວີສາຍພົວພັນລະຫວ່າງພັກ ກັບມະຫາຊົນຕື່ມອີກ.

ບັນຫາທີ່ສຳຄັນກ່ວາໝູ່ ໃນວຽກງານຂະຫຍາຍພັກ ແມ່ນຕ້ອງຖືເປັນສຳຄັນ ທາງດ້ານຄຸນນະພາບ, ກຳແໜ້ນມາດຖານຮັບເອົາສະມາຊິກໃໝ່ເຂົ້າພັກ. ດ້ານໜຶ່ງ ຕ້ອງແກ້ໄຂ

ທ່າອຽງຄັບແຄບ ບໍ່ເອົາໃຈໃສ່ຂະຫຍາຍພັກ; ດ້ານໜຶ່ງອີກ ກໍ່ຕ້ອງແກ້ໄຂທ່າອຽງ ຮັບເອົາຄົນບໍ່ດີເຂົ້າພັກ, ຮັບເອົາຜູ້ທີ່ບໍ່ມີມາດ ຖານພຽງພໍເຂົ້າພັກ. ຕ້ອງເອົາໃຈໃສ່ຮັບເອົາຜູ້ທີ່ດີເດັ່ນໃນຂະບວນການມະຫາຊົນເປັນຕົ້ນແມ່ນຊາວໜຸ່ມ, ຜູ້ທີ່ໄດ້ຜ່ານການທົດສອບໃນການຜະລິດ, ໃນວຽກງານ, ໃນການຕໍ່ສູ້, ມີລະດັບວັດທະນະທຳ, ວິຊາສະເພາະ,ເຕັກ ນິກ ແລະ ວິຊາຊຸ້ມຄອງ, ເດັດດ່ຽວບໍ່ຮັບເອົາຜູ້ທີ່ບໍ່ມີມາດຖານການເມືອງພຽງພໍ, ຜູ້ມີພຽງແຕ່ເປັນຄົນສະຫງຽມຄ່ຽມຄົມ, ຜູ້ທີ່ດີຊື່ ແລະຜູ້ທີ່ຢາກເຂົ້າພັກ ເພື່ອຜົນປະໂຫຍດ,ຖານະຕຳແໜ່ງ. ການຮັບເອົາຄົນເຂົ້າພັກ ຕ້ອງປະຕິບັດໃຫ້ຖືກຕາມລະບຽບຫລັກການທີ່ກຳນົດ ໄວ້ໃນກົດລະບຽບຂອງພັກ. ພາຍຫລັງຮັບ ເອົາຄົນເຂົ້າພັກແລ້ວ ກໍ່ຕ້ອງມີແຜນການບຳລຸງສະມາຊິກພັກໃໝ່ ທາງດ້ານຄວາມຮັບຮູ້ ອັນຈຳເປັນ ກ່ຽວກັບພັກ, ໜ້າທີ່ຂອງສະມາຊິກພັກ, ຫລັກການຈັດຕັ້ງ ແລະການດຳເນີນຊີວິດຂອງພັກ, ການພົວພັນກັບມະຫາຊົນ ແລະ ມອບໝາຍວຽກງານ ເພື່ອເຝິກຝົນໃນຕົວຈິງ.ແກ້ໄຂສະພາວະຮັບເອົາສະມາຊິກໃໝ່ແລ້ວຖືວ່າແລ້ວວຽກ. ບົດຮຽນໃຫ້ຮູ້ວ່າ ມີບາງຄົນ ໃນເວລາຮັບເຂົ້າພັກ ແມ່ນຖືກກັບເປົ້າໝາຍ , ຖືກກັບມາດຖານ ແລະ ຖືກຫລັກການແຕ່ຍ້ອນການຈັດຕັ້ງພັກ ບໍ່ເອົາໃຈໃສ່ສຶກສາອົບຮົມຈຶ່ງໄດ້ກາຍເປັນຜູ້ຫລ້າຫລັງ.

ຄຽງຄູ່ກັບການຮັບເອົາສະມາຊິກໃໝ່ນັ້ນ ຕ້ອງເອົາພາກສ່ວນເສື່ອມຊຸມປຣົນທາດ, ຜູ້ທີ່ບໍ່ສົມເປັນສະມາຊິກພັກອອກຈາກພັກຢ່າງ ທັນການ. ຄຽງຄູ່ວຽກງານຂະຫຍາຍພັກ, ການເອົາຜູ້ທີ່ບໍ່ສົມເປັນສະມາຊິກພັກອອກຈາກ ພັກມັນແມ່ນວຽກ ທີ່ຕ້ອງເຮັດຢ່າງເປັນ ປົກກະຕິ ແລະ ຈຳເປັນໃນການດຳເນີນຊີວິດຂອງພັກ, ໃນວຽກງານກໍ່ສ້າງພັກ. ມີແຕ່ເຮັດແນວ ນັ້ນຈຶ່ງຈະຮັບປະກັນຄວາມປອດໃສ ແລະ ຄວາມເຂັ້ມແຂງຂອງພັກ,ປະກອບສ່ວນຢ່າງຕັ້ງໜ້າເຂົ້າໃນການສຶກສາອົບຮົມສະມາຊິກພັກ, ຮັກສາສາຍພົວພັນອັນດີງາມລະຫວ່າງພັກ ກັບມະຫາຊົນ.ຕ້ອງແກ້ໄຂບັນດາແນວຄິດລັງເລ , ເຫັນແກ່ຕົນ, ຢ້ານກະທົບກະເທືອນບໍ່ກ້າຫານເອົາຜູ້ທີ່ບໍ່ສົມເປັນສະມາຊິກພັກອອກຈາກພັກ. ພ້ອມກັນນັ້ນກໍ່ຕ້ອງປ້ອງກັນສະກັດກັ້ນ ແລະປະຕິບັດມາດຕະການຢ່າງເຄັ່ງຂົ້ມ ຕໍ່ພະນັກງານ ສະມາຊິກພັກ ຄົນໃດສວຍໃຊ້ແຜນນະໂຍບາຍດັ່ງກ່າວນີ້ ເພື່ອເອົາສະມາຊິກຜູ້ທີ່ດີ ມີນ້ຳໃຈຕໍ່ສູ້ ໂດຍກົງກັບຄວາມຂາດຕົກບົກພ່ອງຄວາມຜິດພາດຂອງພະນັກງານນຳພາອອກຈາກພັກ.

*

* *

ເພື່ອກໍ່ສ້າງຖັນແຖວພະນັກງານ- ສະມາຊິກພັກເຂັ້ມແຂງນັ້ນ ຄຽງຄູ່ກັບການຍົກສູງຄຸນນະພາບຂອງສະມາຊິກພັກ,ຕ້ອງເອົາໃຈໃສ່ຖືເປັນສຳຄັນ ແລະ ເຮັດວຽກງານພະນັກງານ

ຂອງພັກໃຫ້ດີກ່ວາເກົາ.

ໃນວຽກງານພະນັກງານນັ້ນ ບັນຫາທີ່ສຳຄັນ ແມ່ນຕ້ອງຕີລາຄາພະນັກງານ ຢ່າງຖືກຕ້ອງ. ນີ້ແມ່ນບັນຫາໜຶ່ງທີ່ບໍ່ງ່າຍດາຍ ປານໃດ, ການຕີລາຄາພະນັກງານ ຕ້ອງອີງ ໃສ່ມາດຖານ ແລະ ຕ້ອງວິທະຍາສາດ, ເຂົ້າເລິກເຖິງທາດແທ້ຂອງພະນັກງານ; ແກ້ໄຂວິທີສັງເກດພະນັກງານແບບຮູບການ, ມະລຸ້ມ ມະລ້ອຍ, ບໍ່ຮອບດ້ານ, ມັກແຕ່ຜູ້ທີ່ແກ່ນເຄີຍ , ຄົນທ້ອງຖິ່ນດຽວ, ເຜົ່າຊົນດຽວກັບຕົນ, ມີແຕ່ເອົາໃຈໃສ່ພາກສ່ວນຕົ້ນກຳເນີດ, ມີແຕ່ ສັງເກດທາງດ້ານສະພາບ ແບບດຳລົງຊີວິດຂອງພະນັກງານ, ມີແຕ່ຖືໃບປະກາສະນີຍະບັດຂັ້ນນັ້ນ ຂັ້ນນີ້ ເປັນສຳຄັນ ແຕ່ພັດບໍ່ເບິ່ງ ຢ່າງເລິກເຊິ່ງເຖິງຄວາມສາມາດສຳເລັດໜ້າ ທີ່ວຽກງານຂອງຜູ້ນັ້ນ. ລາຍງານການ ເມືອງຕໍ່ກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກ ສະຫາຍເລຂາທິການໃຫຍ່ ໄກສອນ ພົມວິຫານ ໄດ້ຊີ້ແຈ້ງວ່າ: "ໃນໄລຍະປະຕິວັດປັດຈຸບັນນີ້ພະນັກງານຕ້ອງມີບັນດາມາດຖານດັ່ງນີ້:

- ຈົງຮັກພັກດີຕໍ່ພາລະກິດຂອງພັກ, ກຳແໜ້ນແນວທາງ, ນະໂຍບາຍຂອງພັກ ແລະລັດ, ມີມານະຈິດຜ່ານຜ່າຄວາມຫຍຸ້ງຍາກຕ່າງຕ່າງ ເພື່ອສຳເລັດໜ້າທີ່ທີ່ໄດ້ຮັບມອບໝາຍ, ມີຫລັກໝັ້ນມິດ-ສັດຕູຈະແຈ້ງ, ມີສະຕິຈັດຕັ້ງ, ລະບຽບວິໄນ ແລະ ມີນ້ຳໃຈຮັບຜິດຊອບ, ມີການພົວພັນຢ່າງສະໜິດແໜ້ນກັບມະຫາຊົນ, ມີຊີວິດປອດໃສຂາວສະອາດ ແລະງ່າຍດາຍ.
- ມີຄວາມຮູ້ທາງດ້ານທິດສະດີ, ວັດທະນະທຳ, ວິທະຍາສາດ-ເຕັກນິກ, ວິຊາ ສະເພາະ, ວິຊາການທີ່ສົມຄູ່ ກັບວຽກງານທີ່ໄດ້ຮັບມອບໝາຍ.
- ມີຄວາມສາມາດຈັດຕັ້ງປະຕິບັດ, ວາງມາດຕະການທີ່ສອດຄ່ອງໄດ້, ກ້າປ່ຽນແປງວິທີເຮັດວຽກ ແລະວິທີທຳມາຫາກິນແບບເກົ່າແກ່, ຫລ້າສະໄໝ, ຮູ້ອຳນວຍຄວບຄຸມວຽກງານ, ຮູ້ເຕົ້າໂຮມ, ລະດົມພະນັກງານ ແລະມະຫາຊົນທ້າວທັນປະຕິບັດວຽກງານຢ່າງມີປະສິດທິຜົນ" (1).

ລາຍງານການເມືອງຍັງເວົ້າແຈ້ງວ່າຄຸນສົມບັດ ແລະຄວາມສາມາດຂອງພະນັກງານມີການກ່ຽວພັນກັນຢ່າງສະໜິດແໜ້ນ, ເພີ່ມເຕີມໃຫ້ແກ່ກັນ ແລະ ຕ້ອງສະແດງອອກຢ່າງຈະແຈ້ງຢູ່ໃນປະສິດທິຜົນຂອງວຽກງານ. ມີນານະຈິດປະຕິວັດບຸກແລ້ວ ແຕ່ຂາດຄວາມຮູ້ , ຂາດຄວາມສາມາດ ຈັດຕັ້ງປະຕິບັດກໍ່ຈະເຮັດໃຫ້ວຽກງານບໍ່ແລ່ນ ຍິ່ງໄປກ່ວານັ້ນ ຍັງເຮັດໃຫ້ເສຍວຽກອີກດ້ວຍ. ກົງກັນຂ້າມຖ້າຫາກມີ

(1) ລາຍງານການເມືອງ ຕໍ່ ກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກ. ເບິ່ງ ວາລະສານອະລຸນໃໝ່ ສະບັບ ພິເສດ ກ່ຽວກັບກອງປະຊຸມໃຫຍ່ຄັ້ງທີ IV ຂອງ ພັກ ເດືອນ 11 ປີ 1986, ໜ້າ 132–133

ຄວາມຮູ້, ຄວາມສາມາດ ແຕ່ຫາກຂາດ ມກນະຈິດປະຕິວັດບຸກ, ຄວາມຮູ້ຄວາມສາມາດກໍ່ຈະຂະຫຍາຍບໍ່ໄດ້.

ໃນຊຸມປີມ່ໆ ມານີ້ວຽກງານກໍ່ສ້າງ, ສັບຊ້ອນ ຈັດວາງພະນັກງານຂອງພັກເຮົາ ໄດ້ມີການດັດແປງບາດກ້າວຫນຶ່ງ ແນໃສ່ຕອບ ສະຫນອງກັບຄວາມຮຽກຮ້ອງຕ້ອງການໃຫມ່ຂອງການປະຕິວັດ, ແຕ່ຍັງມີຄວາມຂາດຕົກ ບົກພ່ອງ, ມີຈຸດອ່ອນທີ່ຕ້ອງແກ້ໄຂ, ຢູ່ຫຼາຍບ່ອນ ພະນັກງານມີອາຍຸກະສຽນສູງ, ລະດັບທິດສະດີການເມືອງ, ວັດທະນະທຳ, ເຕັກນິກ, ວິຊາສະເພາະ ເວົ້າລວມແມ່ນຕ່ຳ , ໂຄງປະກອບພະນັກງານບໍ່ທັນຄົບຊຸດ, ຄວາມສາມາດຍັງຕ່ຳ ເມື່ອທຽບໃສ່ຄວາມຕ້ອງການ ຂອງຫນ້າທີ່ກໍ່ສ້າງເສດຖະກິດ ແລະ ຄຸ້ມຄອງ ປະເທດຊາດ. ຢູ່ບາງຂະແຫນງການ ແລະທ້ອງຖິນ ພະນັກງານຫລັກແຫລ່ງ ຍັງມີການ ປ່ຽນແປງລຽນຕິດ.

ຄວາມຕ້ອງການອັນພື້ນຖານຂອງ ວຽກງານພະນັກງານຂອງພັກເຮົາ ປັດຈຸບັນແມ່ນ: ບົນພື້ນຖານມາດຖານ, ຕ້ອງເລືອກເຟັ້ນແລະຈັດວາງພະນັກງານຢ່າງຖືກຕ້ອງ, ສົມທົບພະນັກງານເກົາ ກັບພະນັກງານໃຫມ່ ເພື່ອຕອບສະຫນອງໃຫ້ແກ່ຫນ້າທີ່ສະເພາະຫນ້າ ທັງຮັບປະກັນລັກສະນະສືບທອດ ໃນການກໍ່ສ້າງ ຖັນແຖວພະນັກງານ, ຕອບສະຫນອງຄວາມຮຽກຮ້ອງຕ້ອງການອັນຍາວນານ.

ພະນັກງານເກົາ ທີ່ໄດ້ຜ່ານການຕໍ່ສູ້ ປົດປ່ອຍຊາດ, ມີຜູ້ໄດ້ຜ່ານການຕໍ່ຕ້ານ ກັບ ຝະລັງ ເວົ້າລວມແມ່ນເດັດດ່ຽວຫມັ້ນຫນຽວ, ມີທັດສະນະມະຫາຊົນ, ມີຫລັກຫມັ້ນຊົນຊັ້ນຈະແຈ້ງ ແລະ ມີບົດຮຽນໃນວຽກງານ. ແຕ່ຍ້ອນເງື່ອນໄຂຕໍ່ສູ້ບັນດາສະຫາຍເຫລົ່ານັ້ນບໍ່ໄດ້ຮ່ຳຮຽນເປັນລະບົບ ແລະເວົ້າລວມ ມີລະດັບວັດທະນະທຳຕ່ຳ ແລະຄວາມຮູ້ທົ່ວໄປຍັງຈຳກັດ, 10 ປີກ່ວາຜ່ານມາ ຫລາຍສະຫາຍໄດ້ ກ້າວຂຶ້ນເພື່ອຮັບປະກັນຫນ້າທີ່ຂອງຕົນ ແລະ ປັດຈຸບັນພວມຮັກສາຄວາມຮັບຜິດຊອບ ໃນ ກົງຈັກຂອງພັກ ແລະ ລັດ. ແຕ່ມີສະຫາຍ ຈຳນວນຫນຶ່ງ ໄດ້ອ່ອນເພຍ ແລະ ບໍ່ມີຄວາມສາມາດພຽງພໍ ໃນວຽກງານຄຸ້ມຄອງລັດ , ຄຸ້ມຄອງເສດຖະກິດ, ຄຸ້ມຄອງວັດທະນະທຳ,ການສຶກສາ, ວິທະຍາສາດ-ເຕັກນິກ...

ພະນັກງານໃຫມ່, ພະນັກງານຫນຸ່ມເວົ້າລວມ ແມ່ນມີຄວາມຮູ້, ຄວາມສາມາດປະດິດສ້າງ, ກ້າຄິດ, ກ້າທຳ, ຫລາຍຄົນໄດ້ ຮັບການກໍ່ສ້າງເປັນພື້ນຖານ ແລະ ຮ່ຳຮຽນເປັນລະບົບ. ເຖິງແນວນັ້ນກໍ່ຕາມ ບັນດາສະຫາຍເຫລົ່ານັ້ນ ບໍ່ທັນມີບົດຮຽນຫລາຍໃນວຽກງານມະຫາຊົນ ແລະ ບໍ່ທັນໄດ້ຜ່ານການຝຶກຝົນຫລໍ່ຫລອມຢູ່ໃນພຶດຕິກຳຕົວຈິງ.

ຍ້ອນເຫດຜົນດັງກ່າວ ຕ້ອງສົມທົບພະນັກງານເກົາ ກັບພະນັກງານໃຫມ່, ພະນັກງານຫນຸ່ມຢ່າງຖືກຕ້ອງ. ບັນດາຈຸດແຂງຂອງ ພະ

ນັກງານທັງ 2 ປະເພດນີ້ ສົມທົບເຂົ້າກັນ , ເພີ່ມເຕີມໃຫ້ແກ່ກັນ ຈະປະກອບສ່ວນ ຍົກສູງກຳລັງແຮງຕໍ່ສູ້ຂອງຖັນແຖວພະນັກງານ, ຮັບປະກັນສຳເລັດໜ້າທີ່ການເມືອງຂອງພັກເປັນຢ່າງດີ. ດ້ານໜຶ່ງອີກ ການສົມທົບຢ່າງ ຖືກຕ້ອງລະຫວ່າງພະນັກງານ 2 ປະເພດນີ້ ຍັງມີຄວາມໝາຍກໍ່ສ້າງຈຳນວນພະນັກງານ ສືບທອດ, ຮັບປະກັນລັກສະນະລຽນຕິດ ແລະສືບຕໍ່ໃນການນຳພາຂອງພັກ. ພະນັກງານ ເກົ່າຕ້ອງເອົາໃຈໃສ່ບຳລຸງຊ່ວຍເຫຼືອພະນັກງານໃໝ່ ເພື່ອໃຫ້ບັນດາສະຫາຍເຫຼົ່ານັ້ນ ຂະຫຍາຍຕົວໄວ; ພະນັກງານໃໝ່ ກໍ່ຕ້ອງເຫັນແຈ້ງຄວາມຮັບຜິດຊອບ ແລະມີກຽດທີ່ໄດ້ເປັນຜູ້ສືບທອດຜູ້ທີ່ໄປກ່ອນ, ຕ້ອງຖະໜອມຕົນຮ່ຳຮຽນເອົາບົດຮຽນຂອງພະນັກງານເກົ່າ.

ຕໍ່ພະນັກງານເກົ່າ ດ້ານໜຶ່ງຕ້ອງບຳລຸງຍົກສູງຄວາມຮູ້, ຍົກສູງລະດັບຄວາມຮູ້ສຶກໄວຕໍ່ອັນໃໝ່, ມີຈິນຕະນາການ ແລະວິທີ ເຮັດວຽກອັນໃໝ່; ດ້ານໜຶ່ງອີກກໍ່ຕ້ອງຊ່ວຍເຫຼືອບັນດາສະຫາຍດັ່ງກ່າວນີ້ ສືບຕໍ່ຍົກສູງຈຸນທາດປະຕິວັດເພື່ອຮັບປະກັນໜ້າທີ່ເປັນຢ່າງດີແລະຂະຫຍາຍບົດບາດແກ່ນສານຂອງຕົນ , ຕ້ານແນວຄິດອວດອ້າງຜົນງານ,ປຽບທຽບຊືງຊຸກ, ຮຽກຮ້ອງຄ່າຕອບແທນ. ສຳລັບບັນດາ ສະຫາຍ ຍ້ອນເຫດຜົນນີ້ ຫຼືເຫດຜົນອື່ນໆ ເຫັນວ່າມີຄວາມຫຍຸ້ງຍາກ ບໍ່ສາມາດແບກຫາບຕຳແໜ່ງ ວຽກງານຂອງຕົນແລ້ວ ຕ້ອງປູກ ລະດົມໃຫ້ເຂົາເຈົ້າຕື່ນຕົວ ສະໝັກໃຈໄປ ເຮັດວຽກງານອື່ນ ທີ່ເໝາະສົມກ່ວາ,ຖ້າວ່າເຖິງອາຍຸກະສຽນ ຫຼືສຸຂະພາບອ່ອນເພຍເກີນໄປແລ້ວ ກໍ່ຕ້ອງໃຫ້ອອກພັກຜ່ອນກິນເບັຽບຳນານ. ແກ້ໄຂແນວຄິດສັກດິນາ, ຕ້ານຄວາມສຳ ນຶກອັນຫຼ້າສະໄໝ, ເກົ່າແກ່, ຄັບແຄບ, ຮັກສາເດີມ ໃນວຽກງານພະນັກງານ.

ຕໍ່ບັນດາສະຫາຍອອກກິນເບັຽບຳນານ , ບັນດາຄະນະພັກ ແລະ ອຳນາດການປົກຄອງຕ້ອງປະຕິບັດນະໂຍບາຍຂອງພັກ ແລະ ຂອງລັດຕໍ່ເຂົາເຈົ້າຢ່າງຖືກຕ້ອງ, ສ້າງເງື່ອນໄຂອັນສະດວກ ເພື່ອໃຫ້ສະຫາຍເຫຼົ່ານັ້ນໄດ້ພັກຜ່ອນສະບາຍໃຈ ສືບຕໍ່ອຸທິດຕົນໃຫ້ແກ່ ວຽກງານຕາມຄວາມສາມາດ ແລະ ກຳລັງ ເຫື່ອແຮງຂອງຕົນ.

ຕໍ່ພະນັກງານ ໜຸ່ມນ້ອຍ ຕ້ອງ ນຳເອົາເຂົາເຈົ້າເຂົ້າສູ່ວຽກງານຕົວຈິງ,ທັນລົງຮາກຖານ ຜ່ານອັນນັ້ນເຂົາເຈົ້າຈະໄດ້ຝຶກຝົນ ຕົນເອງ ແລະ ເຕີບໂຕຂຶ້ນໃນຂະບວນການ . ຕ້ອງກ້າຫານນຳໃຊ້, ເລື່ອນຊັ້ນໃຫ້ຜູ້ດີເດັ່ນທີ່ໄດ້ຜ່ານການຝຶກຝົນ, ທົດສອບ;ແກ້ໄຂ ແນວຄິດຄັບແຄບ, ຄອງເດີມ, ຕີລາຄາບໍ່ຖືກຕ້ອງກັບຄວາມກ້າວໜ້າຂະຫຍາຍຕົວ ຂອງພະນັກງານໜຸ່ມ .

ປັດຈຸບັນນີ້ ອັດຕາສ່ວນພະນັກງານແມ່ຍິງ, ພະນັກງານຊົນເຜົ່າສ່ວນໜ້ອຍ ມີໜ້ອຍທີ່ສຸດໃນບັນດາອົງການນຳພາແຕ່ລະຂັ້ນ,ແຕ່ລະຂະ

ແຫນງການ. ດ້ານຫນຶ່ງ ຕ້ອງຕັ້ງຫນ້າບຳລຸງ ຍົກສູງ ລະດັບຂອງ ບັນດາສະຫາຍ ດັ່ງກ່າວ ດ້ານຫນຶ່ງອີກ ກໍ່ຕ້ອງຫມູນໃຊ້ມາດຖານ ໃຫ້ ເຫມາະສົມກັບສະພາບຕົວຈິງ ເພື່ອມີ ຄວາມ ສາມາດຍົກອັດຕາສ່ວນພະນັກງານແມ່ຍິງ, ພະ ນັກງານບັນດາຊົນເຜົ່າສ່ວນຫນ້ອຍ ໃນບັນດາ ອົງການນຳພາ ແຕ່ລະຂັ້ນ ແຕ່ລະ ຂະແຫນງ ການ.

ບົດຮຽນໃນຊຸມປີທີ່ຜ່ານມາ ໃຫ້ ເຫັນວ່າ ການສັບຊ້ອນ ຈັດວາງພະນັກງານຫລັກແຫລ່ງ ຢ່າງຖືກຕ້ອງຢູ່ແຕ່ລະຂັ້ນ ແຕ່ລະ ຂະແຫນງ ການ ແຕ່ສູນກາງເຖິງຮາກຖານ ແມ່ນບັນຫາ ທີ່ມີຄວາມຫມາຍຕັດສິນໃນການປະຕິບັດ ແນວ ທາງ, ແຜນນະໂຍບາຍຂອງພັກ. ບ່ອນໃດມີ ພະນັກງານຫລັກແຫລ່ງດີ ຢູ່ບ່ອນນັ້ນພາຍໃນມີ ຄວາມສາມັກຄີ, ຂະບວນການມະຫາຊົນ ຟົດ ຟື້ນ, ວຽກງານແຕ່ລະດ້ານ ລ້ວນແຕ່ໄດ້ ຮັບ ຜົນດີ. ພະນັກງານຫລັກແຫລ່ງ ນອກຈາກບັນ ດາມາດຖານລວມທີ່ເວົ້າມານັ້ນແລ້ວ ກໍ່ ຕ້ອງ ແມ່ນແບບຢ່າງທາງດ້ານຄຸນທາດປະຕິວັດມີນ້ຳ ໃຈຕໍ່ສູ້ໂດຍກົງກັບບັນດາແນວຄິດ ແລະ ການ ກະທຳທີ່ບໍ່ຖືກຕ້ອງ. ມີຄວາມສາມາດ ກໍ່ສ້າງ ແລະ ບັນຊາກົງຈັກ, ຮູ້ເຮັດວຽກງານພັກ, ເຕົ້າໂຮມບັນດາພະນັກງານສະມາຊິກພັກແລະ ມະຫາຊົນ, ມີການຄົ້ນຄິດ ມີໄຫວພິບ, ປະດິດ ສ້າງ, ຂະຫຍາຍບັນດາຄວາມຮູ້, ການປະດິດ ສ້າງຂອງລວມຫມູ່; ມີນ້ຳໃຈກ້າຕັດສິນ ແລະ ກ້າຮັບຜິດຊອບ ເພື່ອສຳເລັດຫນ້າທີ່ວຽກງານ.

ໃນສະພາບການປະເທດເຮົາປັດຈຸບັນ ນີ້ ທຸກວຽກງານແມ່ນຍັງໃຫມ່ອ່ຽມ, ຕ້ອງພະຍາ ຍາມໃຫ້ມີການຈັດວາງພະນັກງານຫລັກແຫລ່ງ ທີ່ຖືກຕ້ອງແລ້ວ ມີຄວາມສະຫງົບໃນໄລຍະເວ ລາອັນແນ່ນອນ ເພື່ອໃຫ້ພະນັກງານ ສາມາດ ເຂົ້າເລິກວຽກງານ, ສະສົມບົດຮຽນ, ຍົກສູງ ປະສິດທິຜົນວຽກງານ. ພ້ອມກັນນັ້ນກໍ່ຕ້ອງກ້າ ປຽນພະນັກງານຫລັກແຫລ່ງທີ່ບໍ່ມີຄວາມ ສາ ມາດພຽງພໍຮັບເອົາ ຫລືບໍ່ເຂັ້ມງວດ ປະຕິບັດ ແນວທາງ, ນະໂຍບາຍຂອງພັກ ແລະ ຜູ້ທີ່ບໍ່ ມີກຳລັງພຽງພໍ ໃນການບັນຊາວຽກງານ.

ພະນັກງານນຳພາ ແມ່ນບໍ່ສາມາດ ເກີດ ຂຶ້ນເອງໄດ້ ມັນຕ້ອງຜ່ານວິວັດການຄັດຈ້ອນ, ທົດສອບ, ອົບຮົມບົ່ມເພາະຫລາຍແບບຫລາຍ ວິທີ. ການຈັດວາງພະນັກງານເພື່ອຕອບ ສະ ຫນອງຄວາມຕ້ອງການຂອງຫນ້າທີ່ ສະເພາະ ຫນ້າ ຕ້ອງສົມທົບຢ່າງແຫນ້ນແຟ້ນ ກັບ ການ ກະກຽມພະນັກງານ ໃຫ້ແກ່ຫນ້າທີ່ອັນ ຍາວ ນານ. ຍ້ອນແນວນັ້ນ ການຈັດວາງ ພະນັກ ງານບໍ່ສາມາດເຮັດເທື່ອດຽວແລ້ວກໍ່ແລ້ວ ມັນ ຕ້ອງໄດ້ມີແຜນກຳນົດ. ຂອດທີ່ເປັນອໍກະ ແຈ ໃນແຜນກຳນົດພະນັກງານ ແມ່ນການ ເລືອກ ເຟັ້ນ, ກະກຽມພະນັກງານສຳຮອງ, ພະນັກ ງານສືບທອດ ແລະ ເອົາໃຈໃສ່ກໍ່ສ້າງບຳລຸງ ເຂົ້າເຈົ້າໃຫ້ດີ.

ໂດຍເລີ່ມຈາກຫນ້າທີ່ເສດຖະກິດ-ສັງຄົມ

ຂອງຊາດ ໃນໄລຍະທາງທຳອິດຂອງສະໄໝຂ້າມຜ່ານ ແລະ ໃນແຜນການ 5 ປີແຫ່ງລັດເທື່ອທີ II (1986-1990) ຕ້ອງ ກຳນົດຄວາມຕ້ອງການພະນັກງານແຕ່ລະປະເພດ : ພະນັກງານນຳພາ, ພະນັກງານຄຸ້ມຄອງ, ພະນັກງານວິທະຍາສາດ-ເຕັກນິກ ໃນໄລຍະ10 ເຖິງ 15 ປີ ແລະ ໃນ 5 ປີຕໍ່ໜ້າ. ຈາກນັ້ນຈຶ່ງສ້າງແຜນກຳນົດເລືອກເຟັ້ນ, ກໍ່ສ້າງ, ບຳລຸງພະນັກງານຢ່າງຕັ້ງໜ້າ.

ພິເສດ ແມ່ນຕ້ອງມີວິທີກໍ່ສ້າງພະນັກງານສືບທອດ. ພະນັກງານຮັບຜິດຊອບຢູ່ແຕ່ລະຂັ້ນ, ແຕ່ລະຂະແໜງການ, ບັນດາການຈັດຕັ້ງມະຫາຊົນ ເວລາໃດກໍ່ຕ້ອງຄິດເຖິງການ ກໍ່ສ້າງພະນັກງານ 1-2 ຄົນຢ່າງເປັນປະຈຳ ເຊິ່ງມີຄວາມສາມາດປ່ຽນແທນຕົນໄດ້ ແລະ ຕ້ອງຕັ້ງໜ້າບຳລຸງດ້ານຕ່າງໆ ເຊິ່ງສະຫາຍເຫຼົ່ານັ້ນຍັງອ່ອນ. ໃນການຈັດວາງພະນັກງານນຳພາຢູ່ແຕ່ລະຂັ້ນ, ແຕ່ລະຂະແໜງການນັ້ນ ກໍ່ຕ້ອງມີລະດັບອາຍຸຕ່າງກັນ ເພື່ອຮັບປະກັນລັກສະນະສືບທອດຕໍ່ເນື່ອງກັນ.

ການກໍ່ສ້າງ ແລະ ບຳລຸງຖັນແຖວພະນັກງານ ຕ້ອງແນໃສ່ປັບປຸງຫຼັກໝັ້ນຊົນຊັ້ນ ກຳມະກອນ, ຍົກສູງຄວາມຕື່ນຕົວດ້ານອຸດົມການກອມມູນິດ, ຍົກສູງຄຸນທາດ ແລະ ຄວາມສາມາດ ຂອງແຕ່ລະປະເພດ ພະນັກງານ ໃຫ້ເໝາະສົມ ກັບໜ້າທີ່ການເມືອງ ໃນໄລຍະໃໝ່. ໃນຊຸມປີຕໍ່ໜ້ານີ້ຕ້ອງເອົາໃຈໃສ່ເປັນພິເສດວຽກກໍ່ສ້າງ ແລະ ບຳລຸງຖັນແຖວ ພະນັກງານຫຼັກແຫຼ່ງ ແລະ ພະນັກງານ ສືບທອດ ໃນແຕ່ລະຂັ້ນ ພິເສດແມ່ນຂັ້ນຮາກຖານ ແລະ ຂັ້ນເມືອງ.

ເພື່ອມີຄວາມ ສາມາດ ຕີລາຄາ ພະນັກງານຢ່າງຊັດເຈນ ແລະ ຈາກນັ້ນເພື່ອນຳໃຊ້ ເລື່ອນຊັ້ນໄດ້ຖືກຕ້ອງນັ້ນ ບັນຫາສຳຄັນ ແມ່ນຕ້ອງເພີ່ມທະວີ ແລະ ຍົກສູງຄຸນນະພາບວຽກງານຄຸ້ມຄອງພະນັກງານ. ໄລຍະຜ່ານມາໃນການຊອກຮູ້ພະນັກງານ, ຕີລາຄາພະນັກງານນັ້ນ ຕົ້ນຕໍພວກເຮົາເຄີຍອີງໃສ່ແຕ່ປຶ້ມ ບັນທຶກຊີວະປະຫວັດ, ຖືເບົາການຕິດຕາມ ພະນັກງານໃນວຽກງານ, ໃນການດຳເນີນຊີວິດປະຈຳວັນ, ສ່ວນປຶ້ມບັນທຶກຊີວະປະຫວັດນັ້ນກໍ່ຍັງບໍ່ທັນໄດ້ກໍ່ສ້າງຂຶ້ນ ແລະ ເພີ່ມເຕີມໃຫ້ ຄົບຖ້ວນ. ດັ່ງນັ້ນຕ້ອງດັດແປງວຽກງານຄຸ້ມຄອງພະນັກງານ, ນຳເອົາວຽກງານຄຸ້ມຄອງ ພະນັກງານເຂົ້າສູ່ລະບຽບແບບແຜນຢ່າງໄວວາ.

ການຕີລາຄາພະນັກງານ ກ່ອນອື່ນ ໝົດແມ່ນຕ້ອງເອົາໃຈໃສ່ການຕີລາຄາຜົນສຳເລັດວຽກງານຂອງເຂົາເຈົ້າ, ສັງເກດຄຸນທາດ ແລະ ຄວາມສາມາດຂອງເຂົາເຈົ້າທີ່ສະແດງອອກໃນການປະຕິບັດໜ້າທີ່ການເມືອງ. ຕ້ອງມີທ່າທີ ແລະ ວິທີຄິດຖືກຕ້ອງ ໃນເວລາຕີລາຄາພະນັກງານ ເຊິ່ງກ່ອນອື່ນໝົດນັ້ນແມ່ນທ່າທີໃສສະອາດ, ພາວະວິໄສ, ບໍ່ເຫັນແກ່ຕົວ ຕ້ອງເລີ່ມຈາກຜົນປະໂຫຍດລວມຂອງພັກ ,

ຂອງການປະຕິວັດ, ບໍ່ລັບແລບ, ຄິດໄລ່ ຫລື ເຫັນແກ່ຕົວ ກ້າວໄປເຖິງ "ຮັກຜູ້ໃດຜູ້ນັ້ນດີ", " ຊັງຜູ້ໃດຜູ້ນັ້ນບໍ່ດີ". ຕ້ອງມີການຈັດຕັ້ງ,ມີຂໍ້ກຳນົດກົດລະບຽບຮັບປະກັນໃຫ້ແກ່ການຕີລາຄາ, ການເລືອກເຟັ້ນ, ເລື່ອນຊັ້ນ ພະນັກງານ ມີການຮັບປະກັນ, ພາວະວິໄສ, ຊັດເຈນ ຕ້ອງມີແຜນການບູລະນະປື້ມບັນທຶກຊີວະປະຫວັດພະນັກງານແຕ່ລະກ້າວ ເພື່ອ ສ່ອງແສງການປ່ຽນແປງໃນການດຳເນີນຊີວິດຂອງພະນັກງານໃຫ້ທັນເວລາ. ບັນດາຂໍ້ກຳນົດ ທີ່ສຳຄັນ ກ່ຽວກັບພະນັກງານຄື: ຕີລາຄາ,ສັບຊ້ອນຈັດວາງພະນັກງານ, ເລື່ອນຊັ້ນ, ປະຕິບັດວິໄນ ຕ້ອງໄດ້ຮັບການຕົກລົງລວມຫມູ່ຂອງອົງການນຳພາ. ມີແຕ່ການຕົກລົງລວມຫມູ່ຈຶ່ງຈະຮັບປະກັນໃຫ້ການເລືອກເຟັ້ນ, ຈັດ ວາງພະນັກງານຢ່າງຊັດເຈນ, ພາວະວິໄສ, ຮັບປະກັນຄວາມສາມັກຄີເປັນເອກະພາບຢູ່ ພາຍໃນ.

ພຶດຕິກຳປະຕິວັດປະເທດເຮົາ ໄດ້ພິ ສູດໃຫ້ເຫັນວ່າ ໃນຫລາຍປີຜ່ານມາ ຖັນແຖວພະນັກງານ-ສະມາຊິກພັກ ພວກເຮົາໄດ້ມີການຊຸທິດອັນໃຫຍ່ຫລວງຕໍ່ພາລະກິດປະຕິວັດ, ໄດ້ພ້ອມກັບປະຊາຊົນທົ່ວຊາດຕໍ່ສູ້ສ້າງບັນດາ ຮູບພາບອັນສະຫວ່າງສະໄຫວກ່ວາຫມູ່ໃນປະຫວັດສາດຂອງຊາດ. ປັດຈຸບັນນີ້ ພັກເຮົາ,ປະຊາຊົນເຮົາ ພວມຮັບຜິດຊອບບັນດາຫນ້າທີ່ ອັນໃຫມ່ອ່ຽມ, ຫນັກຫນ່ວງ ເຊິ່ງປະຫວັດ ສາດໄດ້ມອບຫມາຍໃຫ້. ຄະນະພັກທຸກຂັ້ນ,ບັນດາການຈັດຕັ້ງພັກ ຕ້ອງເປັນຫ່ວງເປັນໄຍ ກ່ວາເວລາໃດຫມົດ ໃນວຽກງານກໍ່ສ້າງຖັນ ແຖວພະນັກງານ-ສະມາຊິກພັກ ໃຫ້ນັບມື້ນັບ ເຂັ້ມແຂງ, ຮັບປະກັນໃຫ້ແກ່ບັນດາມະຕິ ຂອງພັກໄດ້ຮັບການປະຕິບັດຢ່າງມີໄຊ, ນຳເອົາການປະຕິວັດປະເທດເຮົາ ກ້າວຂຶ້ນຍາດເອົາ ບັນດາໄຊຊະນະໃຫມ່ ໃຫຍ່ຫລວງກ່ວາເກົ່າ .

*

* *



# ບົດລາຍງານ

ຂອງ ສະຫາຍ ຈູມມະລີ ໄຊຍະສອນ

## ຕາງໜ້າໃຫ້ກຳລັງປ້ອງກັນຊາດ — ປ້ອງກັນຄວາມ ສະຫງົບ

### ຕໍ່ກອງປະຊຸມໃຫຍ່ຄັ້ງທີ່ IV ຂອງພັກ

ຂໍຮຽນ ຄະນະປະທານ !

ຂໍຮຽນ ທີ່ປະຊຸມ !

ຕາງໜ້າໃຫ້ພະນັກງານ, ສະມາຊິກພັກ ແລະ ນັກຮົບໃນທົ່ວກອງທັບ ຄະນະ ຜູ້ແທນ ອົງຄະນະພັກກອງທັບພວກຂ້າພະເຈົ້າ ຂໍ ສະແດງຄວາມຄຳນັບ ແລະ ຊົມເຊີຍກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກຢ່າງສຸດອົກສຸດໃຈ.

ຄະນະຜູ້ແທນອົງຄະນະພັກກອງທັບ ເປັນເອກະສັນຢ່າງສົມບູນຕໍ່ລາຍງານການ ເມືອງຂອງຄະນະບໍລິຫານງານສູນກາງພັກທີ່ສະເໜີ ໂດຍ ສະຫາຍ ເລຂາທິການໃຫຍ່ ໄກສອນ ພົມວິຫານ ທີ່ເຄົາລົບຮັກ .

5 ປີຜ່ານມາ, ໃນສະພາບການ ແວດລ້ອມສາກົນ ແລະພາກພື້ນສຸດທີ່ເຄັ່ງຕຶງ, ສັບສົນ, ສັດຕູພູກໂຕໄດ້ສົມຮູ້ຮ່ວມຄິດກັນຕ້ານຢັ້ນທຳລາຍການປະຕິວັດປະເທດເຮົາຢ່າງ ຮອບດ້ານ, ແຕ່ພາຍໃຕ້ການນຳພາຂອງ ສູນກາງພັກ ແລະ ຄະນະພັກທ້ອງຖິ່ນທຸກຂັ້ນ,ກອງທັບ ແລະ ປະຊາຊົນເຮົາໄດ້ບຸກບືນສູ້ຊົນປະ ຕິບັດໜ້າທີ່ ແລະ <u>ຍາດໄດ້ໄຊຊະນະອັນໃຫຍ່ຫຼວງໃນແນວຮົບປ້ອງກັນຊາດ-ປ້ອງກັນຄວາມ ສະຫງົບ ໃນທົ່ວປະເທດ</u>.

ບັນດາກຳລັງປະກອບອາວຸດໄດ້ຕັ້ງ ໜ້າປະຕິບັດແຜນນະໂຍບາຍຍຸດທະສາດທັນທີດລົງ

ຮາກຖານຂອງກົມການເມືອງສູນກາງພັກ, ໄດ້ເປັນເຈົ້າການສົມທົບກັບບັນດາຂະແຫນງການ ແລະ ທ້ອງຖິ່ນຕ່າງໆ ເຄື່ອນໄຫວລຽນຕິດ , ທັງຕັ້ງຫນ້າຕີສັດຕູ, ທັງເຂົ້າຮ່ວມການກໍ່ສ້າງ ແລະ ປັບປຸງກຳລັງປະຕິວັດຢູ່ຮາກຖານ, ທັງຊ່ວຍເຫລືອປະຊາຊົນບັນດາເຜົ່າ, ຍູ້ການຜະລິດ, ປົວແປງຊີວິດການເປັນຢູ່ທາງດ້ານວັດຖຸ, ວັດທະນະທຳໃຫ້ປະຊາຊົນ. ພວກເຮົາ ທັບມ້າງທີ່ຫມັ້ນກອງປຸ້ນໄດ້ຫລາຍແຫ່ງ ແລະ ຈຳກັດການແຊກຊຶມທຳລາຍຂອງພວກເຂົາ, ປົກປັກຮັກສາອົງການນຳຂອງພັກ, ຂອງລັດແລະບັນດາວັນບຸນໃຫຍ່ໄດ້ຢ່າງປອດໄພ, ປັບປຸງຄວາມສະຫງົບຢູ່ຮາກຖານ, ນຳເອົາສະພາບຄວາມສະຫງົບຢູ່ພາຍໃນປະເທດເຂົ້າສູ່ຄວາມເປັນປົກກະຕິ.

ຫມູນໃຊ້ແນວທາງການປ້ອງກັນຊາດ - ປ້ອງກັນຄວາມສະຫງົບທົ່ວປວງຊົນ, ຮອບດ້ານ ແລະຮ່ວມສຳພັນຂອງພັກ, ກອງທັບ ແລະປະຊາຊົນເຮົາໄດ້ຜັນຂະຫຍາຍແຜນການປ້ອງກັນປະເທດຊາດ. ທັບມ້າງ ແລະ ຕີຕ້ານບັນດາການເຄື່ອນໄຫວປະກອບອາວຸດ ບຽດຢຶດ , ລ່ວງລ້ຳຊາຍແດນຂອງສັດຕູທຸກໂຕໄດ້ຢ່າງທັນການ, ພິເສດແມ່ນການທີ່ພວກປະຕິການຂວາຈັດໄທໃຊ້ກອງທະຫານຫລວງບຸກໂຈມຕີ ຍຽດຍຶດເອົາ 3 ຫມູ່ບ້ານ ແຂວງ ໄຊຍະບູລີ ໃນເດືອນ 6/1984. ພາຍໃຕ້ການຊີ້ນຳ ຂອງສູນກາງພັກພວກເຮົາໄດ້ຫມູນໃຊ້ບັນດາວິທີຕໍ່ສູ້ດ້ວຍອາວຸດ, ການເມືອງ, ການຕ່າງ ປະເທດຢ່າງຖືກຕ້ອງ ເພື່ອເສີມຂະຫຍາຍກຳລັງແຮງສັງລວມ ສະກັດກັ້ນກົນອຸບາຍ ອັນໂຫດຫ້ຽມຂອງສັດຕູໄດ້ແຕ່ຫົວທີ, ປົກປັກຮັກສາຜືນແຜ່ນດິນອັນຄົບຖ້ວນ ແລະ ອຳນາດອະທິປະໄຕຂອງຊາດໄວ້ໄດ້ຢ່າງຫມັ້ນຄົງ .

ໃນເງື່ອນໄຂປະເທດຊາດເຮົາ ຍັງມີ ຂໍ້ຫຍຸ້ງຍາກຫລາຍປະການ, ພັກ ແລະລັດເຮົາໄດ້ມີຄວາມພະຍາຍາມເອົາໃຈໃສ່ຕໍ່ການ ຂະຫຍາຍ ແລະ ຍົກສູງຄຸນນະພາບຂອງ ບັນດາກຳລັງປະກອບອາວຸດໃຫ້ມີບັ້ນເຕີບໃຫຍ່ ເຂັ້ມແຂງຂຶ້ນຢ່າງບໍ່ຢຸດຢັ້ງ. ກອງທັບເຮົາໃນປັດຈຸບັນ ໄດ້ຈັດຕັ້ງເຖິງຂະຫນາດ ກອງພົນນ້ອຍ, ກອງພົນໃຫຍ່ປະກອບດ້ວຍບັນດາເຫຼົ່າລົບແລະເຫລົ່າທັບທີ່ຈຳເປັນ, ໄດ້ມີການປະກອບ ທັນສະໄຫມພໍສົມຄວນ. ໃນຂະບວນວິວັດ ແຫ່ງການກໍ່ສ້າງກຳລັງປະກອບອາວຸດ, ພວກເຮົາໄດ້ກຳແຫນ້ນທິດນຳເອົາການປັບປຸງຍົກສູງຄຸນນະພາບເປັນຕົ້ນຕໍ, ສຶກສາອົບຮົມການເມືອງແນວຄິດ, ເສີມຂະຫຍາຍທາດແທ້ ແລະ ມູນເຊື້ອກອງທັບປະຕິວັດຢ່າງເປັນປະຈຳ, ເພີ່ມທະວີການອົບຮົມການທະຫານ, ຮັບປະກັນພະລາທິການເຕັກນິກ, ສຸມໃສ່ຂອດກໍ່ສ້າງບຳລຸງຖັນແຖວພະນັກງານ, ກໍ່ສ້າງກອງ ຮາກຖານແຂງຮອບດ້ານ. ໄປພ້ອມໆກັບການກໍ່ສ້າງທະຫານຫລວງ, ພວກເຮົາກໍ່ຖືວຽກງານການທະຫານທ້ອງຖິ່ນ ເປັນສຳຄັນ, ເປັນຫ່ວງເປັນໄຍ

ປັບປຸງ ທະຫານທ້ອງຖິ່ນ ແລະຂະຫຍາຍກອງຫລອນ-ກອງປ້ອງກັນຄວາມສະຫງົບຢູ່ທ້ອງຖິ່ນ ແລະ ຮາກຖານ. ບັນດາກຳລັງປະກອບ ອາວຸດເຮົາ ຍາມໃດກໍ່ຮັບປະກັນພາຫະນະກຳລັງຊຸນແຮງຂອງຜະເດັດການກຳມາຊີບທີ່ບໍລິ ສຸດຜຸດຜ່ອງຕໍ່ພັກຢ່າງເດັດຂາດ, ເວລາໃດ ກໍ່ກຽມພ້ອມປະຕິບັດ ແລະເຮັດຫນ້າທີ່ທີ່ພັກມອບຫມາຍໃຫ້ເປັນຢ່າງດີ .

ໂດຍສົມທົບລະຫວ່າງການສ້າງເສດຖະກິດ ກັບການປ້ອງກັນຊາດ,ປ້ອງກັນຄວາມສະຫງົບ ກັບເສດຖະກິດ, ບໍລິສັດພັດທະນາ ພູດອຍ ໄດ້ບັນລຸສຳເລັດໃນເບື້ອງຕົ້ນ ເຮັດໃຫ້ໃບຫນ້າຂອງຊົນນະບົດ,ເຂດພູດອຍບາງບ່ອນມີການປ່ຽນແປງໃຫມ່ ທີ່ເປັນຫນ້າຊົມຊົມ.

ກອງທັບ ແລະ ປະຊາຊົນເຮົາໄດ້ປັບປຸງເພີ່ມທະວີຄວາມສາມັກຄີຮ່ວມສຳພັນສູ້ຮົບແບບພິເສດກັບ ຫວຽດນາມ -ກຳປູເຈຍ ແລະສາມັກຄີຮ່ວມມືຮອບດ້ານ ກັບສະຫະພາບໂຊວຽດ ແລະ ບັນດາປະເທດສັງຄົມນິຍົມອ້າຍນ້ອງອື່ນອື່ນຢ່າງບໍ່ຢຸດຢັ້ງ.ຍາມໃດກໍ່ມີສະຕິປົກປັກ ຮັກສາການພົວພັນສາມັກຄີສາກົນອັນເປັນຕາຍນີ້, ຕ້ານທຸກການໃສ່ຮ້າຍປ້າຍສີ,ແບ່ງແຍກ,ມ້າງເພທຳລາຍຂອງສັດຕູທຸກໂຕ,ພິເສດແມ່ນການພົວພັນສາມັກຄີລະຫວ່າງກອງທັບ ແລະປະຊາຊົນເຮົາ ກັບກອງທັບ ແລະປະຊາຊົນ ຫວຽດນາມອ້າຍນ້ອງ ກໍ່ນັບມື້ນັບໄດ້ເປີດກ້ວາງດ້ວຍຫລາຍຮູບແບບວິທີທີ່ອຸດົມຮັ່ງມີ ແລະ ມີປະສິດທິຜົນ, ທັງຮ່ວມສຳພັນປ້ອງກັນຊາດ,ທັງຮ່ວມມື ແລະ ສຳພັນທາງດ້ານເສດຖະກິດ, ສ້າງພື້ນຖານວັດຖຸເຕັກນິກໃຫ້ແກ່ການພົວພັນ ລະຫວ່າງສອງປະເທດໃຫ້ນັບມື້ນັບແຫນ້ນແຟ້ນ.

ສິ່ງທີ່ພາໃຫ້ພວກເຮົາບັນລຸໄດ້ບັນດາ ໄຊຊະນະດັ່ງກ່າວນັ້ນ, ກ່ອນອື່ນຫມົດແມ່ນ ຍ້ອນແນວທາງການປະຕິວັດສັງຄົມນິຍົມ ແລະແນວທາງປ້ອງກັນຊາດ, ປ້ອງກັນຄວາມສະ ຫງົບທົ່ວປວງຊົນ, ຮອບດ້ານແລະຮ່ວມສຳພັນຂອງພັກເຮົາສຸດທີ່ຖືກຕ້ອງ ແລະປະດິດສ້າງ.ພ້ອມກັນນັ້ນກໍ່ແມ່ນຍ້ອນການບຸກບືນສູ້ຊົນຂອງ ກອງທັບ ແລະ ການປະກອບສ່ວນອັນໃຫຍ່ ຫລວງຂອງປະຊາຊົນບັນດາເຜົ່າ, ຂອງບັນດາ ຂະແຫນງການ,ຂັ້ນຕ່າງໆ, ຂອງກຳລັງປະກອບອາວຸດ ແລະປ້ອງກັນຄວາມສະຫງົບໃນທົ່ວປະເທດ. ນອກຈາກນັ້ນ ສິ່ງສຳຄັນ ອີກອັນຫນຶ່ງແມ່ນໄດ້ຮັບການຊ່ວຍເຫລືອອັນໃຫຍ່ຫຼວງຂອງຫວຽດນາມ, ໂຊວຽດ ແລະ ບັນດາປະເທດສັງຄົມນິຍົມອ້າຍນ້ອງອື່ນໆ.

ກອງທັບເຮົາ ໄດ້ຕັດສິນໃຈບຸກບືນ ກ້າວຂຶ້ນຢ່າງບໍ່ຢຸດຢັ້ງ ເພື່ອໃຫ້ສົມກັບຄຳຍ້ອງ ຍໍຂອງສະຫາຍ ເລຂາທິການໃຫຍ່ ໃນກອງປະຊຸມໃຫຍ່ຂອງອົງຄະນະພັກທົ່ວກອງທັບ: "ກອງທັບແມ່ນກຳລັງຫລັກແຫລ່ງໃນການຈັດຕັ້ງປະຕິບັດແນວທາງແຜນນະໂຍບາຍຂອງພັກ ໃນບັນດາເຂດສຳຄັນຍຸດທະສາດຢູ່ປະເທດເຮົາ,ໄດ້ເຊື່ອມຊຶມແລະປະຕິບັດ 2 ຫນ້າທີ່ຍຸດທະສາດ

ໄປພ້ອມໆກັນຢ່າງຕັ້ງໜ້າ ແລະ ຍາດໄດ້ຜົນງານທີ່ໜ້າສັນລະເສີນ ".

ຮຽນ ທີ່ປະຊຸມ !

ພື້ນຖານການປ້ອງກັນຊາດປ້ອງກັນຄວາມສະຫງົບ ເຖິງວ່າໄດ້ເຕີບໃຫຍ່ໜັກແໜ້ນສົມຄວນ, ແຕ່ກໍ່ຍັງມີຂໍ້ຂາດຕົກບົກພ່ອງ ແລະຈຸດອ່ອນຫລາຍ. <u>ຄວາມສະຫງົບຢູ່ພື້ນຖານ ຍັງບໍ່</u>ທັນໜັກແໜ້ນ ແລະທົ່ວເຖິງຢ່າງແທ້ຈິງແລະໃນຈຸມປີຜ່ານມາຢູ່ບາງບໍລິເວນພູດອຍ ທີ່ຫຼະກັນດານ ແລະ ທ້ອງຖິ່ນຕ່າງໆ ທີ່ສຳຄັນທາງດ້ານປ້ອງກັນຊາດ-ປ້ອງກັນ ຄວາມສະຫງົບພວກເຮົາສາມາດແກ້ໄຂໄດ້ດີ, ແຕ່ການ ຈັດຕັ້ງປົວແປງຊີວິດການເປັນຢູ່ຂອງປະຊາຊົນ, ກໍ່ສ້າງຂະຫຍາຍກຳລັງປະຕິວັດຢູ່ຮາກຖານແລະການກໍ່ສ້າງບຳລຸງຖັນແຖວພະນັກງານຫຼັກແຫຼ່ງຢູ່ຂັ້ນບ້ານ ແລະ ຕາແສງຍັງບໍ່ທັນໄດ້ດຳເນີນໄປຢ່າງຕັ້ງໜ້າ.

<u>ການປ້ອງກັນຄວາມສະຫງົບທາງເສດຖະກິດ, ວັດທະນະທຳສັງຄົມຂອງພວກເຮົາ ຍັງມີຫລາຍບ່ອນເພີ</u>. ບໍ່ທັນສະດຸ້ງໄວໃນການຕໍ່ສູ້ຕ້ານບັນດາຖ້ອຍທຳນອງ, ຫລ່ຽມລາຍໃສ່ຮ້າຍປ້າຍສີແບ່ງແຍກ, ມ້າງເພທຳລາຍຂອງສັດຕູເພື່ອປ້ອງກັນແນວທາງນະໂຍບາຍ ຂອງພັກແລະ ກຳລັງປະຕິວັດ.

ທາງດ້ານກໍ່ສ້າງກຳລັງປະກອບອາວຸດ , ການສຶກສາອົບຮົມການເມືອງ ອົບຮົມການທະຫານ, ວຽກງານຈຸ້ມຄອງລ້ຽງດູທັບແລະວຽກງານຮັບປະກັນອື່ນໆຍັງເຮັດບໍ່ທັນດີ, ວຽກງານການທະຫານທ້ອງຖິ່ນເວົ້າລວມ ແມ່ນຍັງອ່ອນ, ທ່າສະໜາມປ້ອງກັນຊາດ ປ້ອງກັນຄວາມສະຫງົບຢູ່ທ້ອງຖິ່ນຍັງບໍ່ທັນທົ່ວເຖິງ ແລະ ໜັກແໜ້ນ.

ສາຍເຫດຕົ້ນຕໍທີ່ພາໃຫ້ມີຈຸດອ່ອນບົກພ່ອງດັ່ງກ່າວ ແມ່ນມາຈາກຄວາມຮັບຮູ້ມິດ-ສັດ ຕູຍັງບໍ່ທັນຈະແຈ້ງ, ເລິກເຊິ່ງ, ບໍ່ທັນເຫັນໝົດກົນອຸບາຍ, ເລ່ຫລ່ຽມອັນເລິກແລບໂຫດຫ້ຽມຂອງສັດຕູ, ສະຕິລະວັງຕົວປະຕິວັດຂອງ ພະນັກງານ, ສະມາຊິກພັກ ແລະ ປະຊາຊົນຍັງບໍ່ທັນເລິກເຊິ່ງ, ດ້ານອື່ນຄວາມສາມາດ ຈັດຕັ້ງປະຕິບັດແນວທາງແຜນນະໂຍບາຍຂອງບັນດາຂະແໜງການແລະທ້ອງຖິ່ນຕ່າງໆຍັງອ່ອນ.

ຮຽນ ບັນດາສະຫາຍ !

ປັດຈຸບັນສະພາບການຂອງໂລກ ພວມຜັນແປໄປຢ່າງສັບສົນ, ແຕ່ທ່າອ່ຽງຕົ້ນຕໍຂອງສະພາບການ ກໍຍັງແມ່ນການຕໍ່ສູ້ຊົນຊັ້ນ ອັນຂ້ຽວຂາດ ໃນທ່າມກາງການຢູ່ຮ່ວມກັນໂດຍສັນຕິ, ບັນດາອິດທິກຳລັງຈັກກະພັດ ແລະແຜ່ອຳນາດຍັງບໍ່ທັນປະລະ ນະໂຍບາຍ ອັນເປັນປໍລະປັກຂອງພວກເຂົາເທື່ອ .

ຕໍ່ສາມປະເທດອິນດູຈີນ ພວກເຂົາຍັງສືບຕໍ່ດຳເນີນຍຸດທະສາດສົງຄາມທຳລາຍ ຫລາຍດ້ານ ເພື່ອເຮັດໃຫ້ພວກເຮົາອ່ອນເພຍ ແລ້ວປະຕິບັດເຈດຈຳນົງທັບປ້ຽນໂດຍສັນຕິ, ກໍ່ການກະບົດ ໂຄ່ນລົ້ມລະບອບໃໝ່ຂອງພວກເຮົາ,

ດັ່ງນັ້ນ, ການຕໍ່ສູ້ລະຫວ່າງເຮົາກັບສັດຕູ,ລະຫວ່າງສອງເສັ້ນທາງຢູ່ປະເທດເຮົາ ຍັງດຸເດືອດ, ສັບສົນ ແລະ ຂ້ຽວຂາດ .

ຍ້ອນແນວນັ້ນກອງທັບແລະປະຊາຊົນເຮົາຍິ່ງຕ້ອງເພີ່ມທະວີສະຕິລະວັງຕົວປະຕິວັດຕໍ່ທຸກກົນອຸບາຍລາຍຫລ່ຽມຂອງສັດຕູ, ຕ້ອງ ອອກແຮງກໍ່ສ້າງ, ປັບປຸງກຳລັງປະຕິວັດໃນ ທຸກດ້ານ ແຕ່ຂັ້ນຮາກຖານຂຶ້ນມາ, ປ້ອງກັນພາຍໃນໃຫ້ແຫນ້ນແກ່ນ ແລະ ຕ້ອງກຽມພ້ອມສູ້ຣົບຢູ່ສະເຫມີ. ບົດຮຽນປະຫວັດສາດຕໍ່ສູ້ປະຕິວັດຢູ່ປະເທດເຮົາໄດ້ສະແດງໃຫ້ເຫັນວ່າ: ໃນແຕ່ລະເທື່ອທີ່ມີການໂຍະຍານ ສັດຕູມັກສວຍ ໂອກາດຕ້ານຍັນທຳລາຍພວກເຮົາໂດຍສັນຕິ ວິທີ ດັ່ງນັ້ນ ພວກເຮົາຕ້ອງມີສະຕິລະວັງຕົວສູງ, ອອກແຮງກໍ່ສ້າງກຳລັງປະຕິວັດໃຫ້ເຂັ້ມແຂງ, ກຽມພ້ອມສູ້ຣົບ ຈຶ່ງຈະຜາບແພ້ກົນອຸບາຍຂອງສັດຕູ, ປົກປັກຮັກສາປະເທດຊາດ ແລະ ພາການປະຕິວັດກ້າວຂຶ້ນໄດ້.

ຄະນະຜູ້ແທນອົງຄະນະພັກທົ່ວກອງ ທັບພວກຂ້າພະເຈົ້າ ເຫັນດີເປັນເອກະພາບ ນຳລາຍງານການເມືອງ ແລະ ເນື້ອໃນຫນ້າ ທີ່ປ້ອງກັນຊາດ-ປ້ອງກັນຄວາມສະຫງົບ ທີ່ວ່າຫນ້າທີ່ປ້ອງກັນຊາດ-ປ້ອງກັນຄວາມສະ ຫງົບຍັງແມ່ນຫນ້າທີ່ອັນດັບຫນຶ່ງຂອງການປະຕິ ວັດເຮົາໃນຊຸມປີຕໍ່ຫນ້າ ເພື່ອສຳເລັດຫນ້າທີ່ ໃນສະເພາະຫນ້າ ບັນຫາສຳຄັນຕົ້ນຕໍແມ່ນ ຕ້ອງລະດົມກຳລັງແຮງສັງລວມຂອງລະບົບພະເດັດການກຳມາຊີບ, ນັບແຕ່ຂັ້ນສູນກາງ ລົງຮອດທ້ອງຖິ່ນ ເຂົ້າຮ່ວມໃນການປະຕິບັດຫນ້າ ທີ່ປ້ອງກັນຊາດ - ປ້ອງກັນຄວາມສະຫງົບ .

ເພື່ອປະຕິບັດຫນ້າທີ່ດັ່ງກ່າວໄດ້ດີ ພວກຂ້າພະເຈົ້າຂໍສະເຫນີ: ຕ້ອງຊາບຊຶ້ມຢ່າງເລິກເຊິ່ງ ວ່າການຫັນລົງຮາກຖານປັບປຸງ ຄວາມສະຫງົບຮອບດ້ານ ແມ່ນຫນ້າທີ່ຍຸດທະສາດອັນດັບຫນຶ່ງຂອງພັກ ພວກເຮົາຕ້ອງຫມູນໃຊ້ ທິດນຳ 4 ດ້ານຢ່າງຄົບຖ້ວນ, ກອງທັບ ຕ້ອງມີຄວາມຮັບຜິດຊອບດ້ານການທະຫານ ແລະເຂົ້າຮ່ວມເຮັດວຽກງານດ້ານອື່ນໆ ຕາມຄວາມສາມາດຂອງຕົນ, ແຕ່ບັນດາຂະແຫນງການຂອງລັດ ແລະ ບັນດາທ້ອງຖິ່ນ ຕ້ອງ ຮັບຜິດຊອບໂດຍກົງ ດ້ານການເມືອງ-ເສດຖະກິດ- ວັດທະນະທຳ. ແຕ່ຢາກເຮັດໄດ້ແນວນັ້ນ ຕ້ອງມີພະນັກງານ, ມີວັດຖຸ,ສິນຄ້າງົບປະມານແລະອື່ນໆ .

ປັດຈຸບັນນີ້, ບັນດາບໍລິເວນທີ່ສັດຕູຍັງ ມີການເຄື່ອນໄຫວ, ສ່ວນໃຫຍ່ແມ່ນເຂດພູດອຍເຊິ່ງມີທີ່ຕັ້ງສຳຄັນ ເພື່ອປັບປຸງຄວາມສະຫງົບຮອບດ້ານຢູ່ບໍລິເວນນີ້, ຕ້ອງເອົາໃຈໃສ່ການປົວແປງຊີວິດການເປັນຢູ່ທາງດ້ານວັດຖຸ ແລະຈິດໃຈຂອງປະຊາຊົນເປັນສຳຄັນ. ຜ່ານ ບົດຮຽນຢູ່ເມືອງຮົ່ມ, ເມືອງຈ້າ ເປັນຕົ້ນຢູ່ ຜາທອງ ແລະ ຄຳເກີດ, ເຖິງແມ່ນວ່າພວກເຮົາຫາກໍ່ເຮັດໄດ້ບາງວຽກ ຄືເປີດເສັ້ນທາງ,ສົ່ງສິນຄ້າທີ່ຈຳເປັນຈຳນວນຫນຶ່ງໄປແລກປ່ຽນນຳ

ປະຊາຊົນ, ກໍ່ສ້າງພື້ນຖານເສດຖະກິດ -ສັງຄົມຈຳນວນໜຶ່ງ; ໂຮງໝໍ, ໂຮງຮຽນນັ້ນກໍ່ໄດ້ເຮັດໃຫ້ສະພາບການທັນປຽນຢ່າງຈະແຈ້ງ: ປະຊາຊົນເຜົ່າຍົກຍາມມ່ວນຊື່ນ ເຊື່ອໝັ້ນຕໍ່ພັກ, ຕັ້ງໜ້າເຂົ້າຮ່ວມກໍ່ສ້າງຊີວິດໃໝ່, ຈາກບົດຮຽນຕົວຈິງນັ້ນ,ສະເໜີບັນດາຂະແໜງການຂອງລັດ ແລະ ບັນດາທ້ອງຖິ່ນເອົາໃຈໃສ່ຕື່ມທາງດ້ານເສດຖະກິດ-ວັດທະນະທຳ ເພື່ອປັບປຸງຄວາມສະຫງົບ ຮອບດ້ານປູຮາກຖານ , ເປັນຕົ້ນແມ່ນຕໍ່ເຂດຊົນເຜົ່າ.

– ກ່ຽວກັບໜ້າທີ່ປັບປຸງຍົກສູງ ຄຸນນະພາບຂອງບັນດາກຳລັງປະກອບອາວຸດ, ກອງທັບ ຕ້ອງເພີ່ມທະວີການຄຸ້ມຄອງ, ລັ້ຽງດູ , ສຶກສາອົບຮົມບັນດາກຳລັງປະກອບອາວຸດຂອງຕົນໃຫ້ດີ່ຍິ່ງຂຶ້ນ, ປະຕິບັດກົນໄກນຳພາ ຂອງພັກ ຕໍ່ກຳລັງປະກອບອາວຸດ, ປັບປຸງລະບອບຜູ້ດຽວບັນຊາ ບົນພື້ນຖານການເພີ່ມທະວີການນຳພາໂດຍກົງລວມສູນເປັນເອກະພາບໃນທຸກດ້ານຂອງພັກ. ແຕ່ບັນດາຂະແໜງການຂອງລັດ ແລະ ບັນດາທ້ອງຖິ່ນກໍ່ຕ້ອງເປັນ ຫ່ວງເປັນໄຍເຖິງການກໍ່ສ້າງກຳລັງປະກອບອາວຸດໃຫ້ຖືກຕາມຄວາມຮັບຜິດຊອບທີ່ພັກມອບໝາຍໃຫ້. ເພື່ອຍົກສູງຄຸນນະພາບຂອງກຳລັງ ປະກອບອາວຸດ ເຊິ່ງສະເພາະແຕ່ກອງທັບ ບໍ່ສາມາດແກ້ໄຂດ້ວຍຕົນເອງໄດ້. ປັດຈຸບັນມີ 3 ບັນຫາໃຫຍ່ທີ່ຈະຕ້ອງແກ້ໄຂດ່ວນຄື: ບຸລະມະດ້ານຈຳນວນພົນ, ການສະໜອງສະບຽງອາຫານ ແລະ ວັດຖຸພາລາທິການເຕັກນິກອັນຈຳເປັນແກ່ກອງທັບ ໃຫ້ມີຄວາມສະຫງົບເປັນປົກກະຕິ, ຮັບປະກັນບັນດານະໂຍບາຍແນວຫລັງຕໍ່ກຳລັງປະກອບອາວຸດ.

ຢາກເຮັດໄດ້ແນວນັ້ນພວກເຮົາຕ້ອງເພີ່ມທະວີວຽກງານລະດົມຂະບວນຊາວໜຸ່ມ ອອກໄປເປັນທະຫານ, ຮັບປະກັນໃຫ້ໄດ້ຕາມ ຕົວເລກຄາດໝາຍຂອງການລະດົມພົນ ແຕ່ລະປີແລະມີຄຸນນະພາບດີ, ເມື່ອລັດໄດ້ປະກາດໃຊ້ກົດໝາຍ ພັນທະປ້ອງກັນຊາດ ແມ່ນ ພວກເຮົາຕ້ອງມີໜ້າທີ່ປະຕິບັດໃຫ້ຄົບຖ້ວນ ແລະເຄັ່ງຄັດ, ສືບຕໍ່ຊຸກຍູ້ການອົບຮົມການທະຫານທົ່ວໄປ ຢູ່ບັນດາໂຮງຮຽນ, ອົງການ ສຳນັກງານ, ຮາກຖານການຜະລິດຕາມທີ່ໄດ້ ວາງອອກໃນມະຕິຂອງຄະນະກຳມະການ ປ້ອງກັນຊາດ-ປ້ອງກັນຄວາມສະຫງົບ ສູນກາງ.

–ຮັບປະກັນການປະຕິບັດນະໂຍບາຍແນວຫລັງກອງທັບ ແມ່ນປັດໄຈໜຶ່ງທີ່ສຳຄັນທີ່ ສຸດເພື່ອລະດົມນ້ຳໃຈຂອງພະນັກງານ, ນັກ ຮົບໃນບັນດາກຳລັງປະກອບອາວຸດ,ເປັນຕົ້ນ ໃນປັດຈຸບັນ ແມ່ນຕໍ່ພະນັກງານ, ນັກຮົບທີ່ ອອກພັກຜ່ອນກິນເບັ້ຍບຳນານ ແລະເປັນກອງໜູນທີ່ນັບມື້ນັບຫລາຍ ແລະການປະຕິບັດກົດໝາຍພັນທະປ້ອງກັນຊາດໃນແຕ່ລະປີ ຍິ່ງຈະ ເພີ່ມຂຶ້ນ. ສະເໜີບັນດາທ້ອງຖິ່ນເປັນຫ່ວງ ເປັນໄຍເອົາໃຈໃສ່ເບິ່ງແຍງບັນດາຄອບຄົວ ຜູ້ຖືກບາດເຈັບ, ເສຍສະຫລະ, ຄອບຄົວພະ ນັກ

ງານ, ທະຫານທີພວມປະຈຳການ ຫລື ອອກເປັນກອງຫນູນ, ພາຍຫລັງສຳເລັດຫນ້າທີ ຢູ່ໃນກອງທັບ, ຄວນກຳນົດບັນດາລະບອບ ນະໂຍບາຍອັນຈຳເປັນຊອກວຽກເຮັດ ງານທຳ ແລະ ຊ່ວຍເຫລືອອ້າຍນ້ອງຫຼຸດຜ່ອນໄດ້ຄວາມຫຍຸ້ງຍາກໃນຊີວິດການເປັນຢູ່.

-<u>ການສົມທົບເສດຖະກິດກັບການປ້ອງກັນຊາດກໍ່ສ້າງແນວຫລັງ</u> ແມ່ນບັນຫາຍຸດທະສາດສຳຄັນ ແລະຮອບດ້ານ,ຕ້ອງໄດ້ດຳເນີນ ໄປຢ່າງຍາວນານ. ກ່ອນອື່ນຫມົດຕ້ອງ ຈັດຕັ້ງການກວດສົບ ເພື່ອສ້າງແຜນກຳນົດສັງ ລວມທັງສາມດ້ານ: ກໍ່ສ້າງຮາກຖານການເມືອງ, ປັບປຸງການປ້ອງກັນຊາດ-ປ້ອງກັນ ຄວາມສະຫງົບ ແລະຂະຫຍາຍເສດຖະກິດ-ວັດທະ ນະທຳ. ບົນພື້ນຖານນັ້ນ ອີງໃສ່ຄວາມສາມາດຂອງພວກເຮົາພ້ອມກັບການຮ່ວມມືແລະ ຊ່ວຍເຫລືອຂອງບັນດາປະເທດອ້າຍນ້ອງເພື່ອວາງແຜນການກໍ່ສ້າງຢູ່ບັນດາບໍລິເວນຈຸດຫນັກເປັນແຕ່ລະກ້າວ ສະເຫນີຄະນະກຳມະການແຜນການແຫ່ງ ລັດ ແລະ ບັນດາຂະແຫນງ ການເສດຖະກິດ-ວັດທະນະທຳ-ສັງຄົມ ເຂົ້າຮ່ວມເພື່ອສົມທົບວຽກງານດ້ານຕ່າງໆນຳກັນຈຶ່ງຈະຮັບປະກັນໃຫ້ການປະຕິບັດແຜນການ ທີ່ ວາງອອກໄດ້ຄົບຊຸດ ແລະ ມີປະສິດທິຜົນ.

ເພື່ອປະຕິບັດໄດ້ຫນ້າທີ່ດັ່ງກ່າວ ບັນ ຫາຕົ້ນຕໍແມ່ນເພີ່ມທະວີການນຳພາຂອງພັກ ຕໍ່ພາລະກິດປ້ອງກັນຊາດ -ປ້ອງກັນຄວາມສະຫງົບ, ເປັນຕົ້ນແມ່ນຢູ່ຂັ້ນຮາກຖານ ແລະ ຂະແຫນງການຕ່າງໆ ຕ້ອງເຊື່ອມຊຶມຫນ້າທີ່ ແລະ ວິທີການພັນຂະຫຍາຍປະຕິບັດ, ຫລີກເວັ້ນ ການມອບເຫມົາຫນ້າທີ່ໃຫ້ສະເພາະແຕ່ກອງທັບ . ພ້ອມກັນນັ້ນກໍ່ຕ້ອງສ້າງເງື່ອນໄຂເພື່ອເສີມຂະຫຍາຍບົດບາດເປັນເສນາທິການຂອງອົງການທະຫານທ້ອງຖິ່ນ ໃຫ້ແກ່ຄະນະພັກທ້ອງຖິ່ນ .

ຮຽນ ບັນດາສະຫາຍ !

ຫນ້າທີ່ປົກປັກຮັກສາປະເທດຊາດ ແມ່ນຫນ້າທີ່ຍຸດທະສາດສຳຄັນອັນຫນຶ່ງຂອງທົ່ວພັກ, ທົ່ວກອງທັບ ແລະ ທົ່ວປວງຊົນເຮົາ.ພາຍໃຕ້ການນຳພາຂອງຄະນະບໍລິຫານງານ ສູນກາງພັກ, ທົ່ວກອງທັບຈະຕັດສິນໃຈບຸກບືນກ້າວຂຶ້ນຜ່ານຜ່າອຸປະສັກນາໆປະການ ພ້ອມກັນແກ້ໄຂຈຸດອ່ອນ ແລະ ຂໍ້ຂາດຕົກບົກພ່ອງດ້ວຍຈິນຕະນາການໃຫມ່, ຕັດສິນໃຈພ້ອມກັບທົ່ວປວງຊົນອອກແຮງປະຕິບັດບັນດາມະຕິຂອງກອງປະຊຸມໃຫຍ່ຄັ້ງທີ <u>IV</u> ຂອງພັກໃຫ້ປະກົດຜົນເປັນຈິງ.

ອວຍພອນໃຫ້ກອງປະຊຸມໃຫຍ່ຈົ່ງໄດ້ ຮັບຜົນສຳເລັດຢ່າງສະຫງ່າງາມ .

*

*   *



# ບົດລາຍງານ

### ຂອງສະຫາຍ ສູບທອນ ເທບອາສາ

## ເລຂາຄະນະພັກແຂວງ ຈຳປາສັກ

### ຕໍ່ກອງປະຊຸມໃຫຍ່ຄັ້ງທີ່ IV ຂອງພັກ

ຮຽນ : ຄະນະປະທານທີ່ນັບຖື !

ຮຽນ : ບັນດາຜູ້ແທນ ແລະ ແຂກທີ່ນັບຖື !

ຂ້າພະເຈົ້າຮູ້ສຶກພາກພູມໃຈເປັນຢ່າງຍິ່ງ ທີ່ໄດ້ຕາງໜ້າໃຫ້ອົງຄະນະພັກແຂວງ ຈຳປາສັກຂຶ້ນມາປະກອບຄວາມເຫັນ ຕໍ່ ກອງປະຊຸມໃຫຍ່.

ຕໍ່ໄປນີ້ ຂ້າພະເຈົ້າຂໍລາຍງານກ່ຽວກັບການປະຕິບັດມະຕິ, ແຜນນະໂຍບາຍ, ນະໂຍບາຍຂອງພັກໃນ 10 ປີທີ່ຜ່ານມາ.

ຫລັງຈາກປະເທດຊາດໄດ້ຮັບການ ປົດປ່ອຍຢ່າງສົມບູນ, ພັກເຮົາໄດ້ນຳປະເທດຊາດກ້າວຂຶ້ນສັງຄົມນິຍົມ ໂດຍບໍ່ຜ່ານທຶນນິຍົມ.

ໃນການປະຕິບັດແນວທາງ ແຜນນະ ໂຍບາຍ ແລະ ນະໂຍບາຍຕ່າງໆຂອງພັກໃນຊຸມປີທຳອິດ, ແຂວງຈຳປາສັກພວກຂ້າພະເຈົ້າກໍ່ໄດ້ພົບກັບຄວາມຫຍຸ້ງຍາກຫຼາຍປະການ ຍ້ອນພື້ນຖານເສດຖະກິດຫລ້າຫລັງ ກະແຈກ ກະຈາຍ ເຕັມໄປດ້ວຍລັກສະນະທຳມະຊາດ, ກຸ້ມ

ໃຜກຸ້ມມັນ, ພື້ນຖານວັດຖຸ-ເຕັກນິກມີໜ້ອຍທີ່ສຸດ, ບາງເມືອງພັດຖືກພົນຮ້າຍຕາມມາຂອງສົງຄາມ, ພື້ນຖານການເມືອງ, ລະບົບ ຜະເດັດການກຳມາຊີບຍັງອ່ອນ, ສະມາຊິກພັກມີແຕ່ 1.300 ສະຫາຍ, ຖັນແຖວພະນັກງານມີ 930 ຄົນ ແລະບໍ່ທັນມີບົດຮຽນໃນການຊຸ້ມຄອງເສດຖະກິດ-ສັງຄົມ. ຊ້ຳບໍ່ໜຳສັດຕູພັດອອກແຮງມ້າງເພທຳລາຍຢ່າງລຽນຕິດ, ກໍ່ຄວາມຫຍຸ້ງຍາກໃຫ້ພວກເຮົາຫລາຍປະການ.

ຕໍ່ໜ້າຄວາມຫຍຸ້ງຍາກ ດັ່ງກ່າວ ອົງຄະນະພັກແຂວງຈຳປາສັກໄດ້ຕັດສິນໃຈຍຶດ ໝັ້ນຕາມແນວທາງຂອງພັກ ເສີມຂະຫຍາຍ ມູນເຊື້ອຮັກຊາດ ຮັກລະບອບໃໝ່ສັງຄົມນິຍົມຈິດໃຈເພິ່ງຕົນເອງ ສ້າງຄວາມເຂັ້ມແຂງ ດ້ວຍຕົນເອງ, ຈິດໃຈປະຕິວັດບຸກຂອງທົ່ວພັກ ທົ່ວກອງທັບ ແລະ ປະຊາຊົນໃນທົ່ວແຂວງ ປະຕິບັດບັນດາມະຕິຂອງພັກ, ຜ່ານຜ່າຂໍ້ຫຍຸ້ງຍາກນາງປະການ, ນຳເອົາຂະບວນການກ້າວຂຶ້ນ ແລະ ຍາດໄດ້ໄຊຊະນະໃນຫລາຍດ້ານ ທີ່ ມີລັກສະນະໜັກແໜ້ນ.

ໂດຍປະຕິບັດຕາມແນວທາງປ້ອງກັນຊາດປ້ອງກັນຄວາມສະຫງົບຂອງສູນກາງວາງອອກ ທາງແຂວງໄດ້ສົ່ງພະນັກງານລົງສູ່ ຮາກຖານ ເພື່ອປຸກລະດົມປະຊາຊົນເຂົ້າຮ່ວມ ໃນວຽກງານປ້ອງກັນຊາດ-ປ້ອງກັນຄວາມສະຫງົບຊຸກຍູ້ການຜະລິດ ຂະຫຍາຍການສຶກສາ-ວັດ ທະນະທຳ-ສາທາລະນະສຸກ, ກໍ່ສ້າງພື້ນຖານການເມືອງ, ກໍ່ສ້າງກຳລັງປ້ອງກັນຊາດ ປ້ອງກັນຄວາມສະຫງົບ, ປັບປຸງກໍ່ສ້າງລະບົບຜະເດັດການກຳມາຊີບຢູ່ຂັ້ນຮາກຖານ.

ໃນການຫັນລົງສູ່ຮາກຖານ ພວກຂ້າ ພະເຈົ້າ ໄດ້ເອົາໃຈໃສ່ປັບປຸງບັນດາບໍລິເວນຈຸດໜັກທາງດ້ານເສດຖະກິດ, ການເມືອງ ທີ່ສຳຄັນ, ບໍລິເວນຊາຍແດນ, ເສັ້ນທາງຄົມມະນາຄົມຕົ້ນຕໍ, ລົບລ້າງຮາກຖານໃຕ້ດິນຂອງສັດຕູ, ພວກຂ້າພະເຈົ້າໄດ້ລະດົມເອົານັກຮຽນ ຈຳນວນໜຶ່ງທີ່ຈົບຊູດົມ ເຂົ້າຮ່ວມການຫັນ ລົງຮາກຖານ. ຜ່ານຈາກນັ້ນກໍ່ສ້າງເອົາ ເຈົ້າກາຍເປັນພະນັກງານ ແລະ ບັນຈຸເຂົ້າຢູ່ ຂະແໜງການຕ່າງໆ. ຍ້ອນປັບປຸງຮາກຖານໄດ້ແໜ້ນແກ່ນ ຂະບວນການໃນຫລາຍດ້ານຢູ່ພູກເມືອງຂະຫຍາຍຕົວພໍ ຄວນ, ຄວາມສະຫງົບທາງການເມືອງ, ຄວາມເປັນລະບຽບ ຮຽບຮ້ອຍ ທາງດ້ານສັງຄົມ ກໍ່ນັບມື້ນັບກ້າວເຂົ້າສູ່ຄວາມເປັນປົກກະຕິ.

ທາງດ້ານການຜະລິດອົງຄະນະພັກແຂວງ ໄດ້ສຸມໃສ່ຊີ້ນຳການຜະລິດກະສິກຳ ແລະປ່າໄມ້ຢ່າງຮອບດ້ານ, ຈຸດໜັກແມ່ນການ ປູກເຂົ້າໃນ 8 ເມືອງທີ່ເຮັດນາ, ຊຸກຍູ້ການເຮັດກະເສດສຸມ ຍົກສູງຜະລິດຕະພາບເຂົ້ານາ ປີເພີ່ມຂຶ້ນ ຈາກ 1,7 ໂຕນ ຕໍ່ເຮັກຕາ ໃນປີ 1980 ຂຶ້ນເປັນ 3 ໂຕນຕໍ່ໜຶ່ງເຮັກຕາໃນປີ 1985. ຍອດປະລິມານການຜະລິດ ຄິດສະເລ່ຍທົ່ວຄົນໜຶ່ງຈາກ 440 ກິໂລ ປີ 1980

ຂຶ້ນເປັນ 600 ກິໂລປີ 1985. ຍ້ອນແນວນັ້ນ ຈຶ່ງແກ້ໄຂໄດ້ສະບຽງອາຫານຢ່າງເປັນພື້ນຖານ ແລະ ມີສ່ວນແຮໄວ້ທັງເຮັດພັນທະຕໍ່ສູນກາງ ຄິດສະເລ່ຍປີໜຶ່ງ 5.000ໂຕນ, ພ້ອມທັງຊ່ວຍເຫລືອໃຫ້ແຂວງໃກ້ຄຽງຈຳນວນໜຶ່ງ.

ໄປຄຽງຄູ່ກັບການປູກເຂົ້າ ແຂວງຍັງໄດ້ເອົາໃຈໃສ່ປູກພືດອຸດສາຫະກຳໄລຍະສັ້ນແລະໄລຍະຍາວ ແລະ ລ້ຽງສັດຢູ່ພູພຽງບໍລິເວນປາກຊ່ອງ ເພື່ອເປັນແຫລ່ງສິນຄ້າຂາອອກ. ເນື້ອທີ່ປູກໝາກແໜ່ງ ແລະໝາກກາເຟໃນປີ 1985 ໄດ້ເພີ່ມຂຶ້ນ 3 ເທົ່າຖ້າທຽບໃສ່ປີ 1980, ສັດລ້ຽງປະເພດຕ່າງໆກໍ່ລ້ວນແຕ່ໄດ້ເພີ່ມຂຶ້ນ, ສະເພາະປີ 1985 ຄວາຍເພີ່ມຂຶ້ນ 5% ງົວເພີ່ມຂຶ້ນ 12%, ໄລ່ສະເລ່ຍແລ້ວຄອບຄົວໜຶ່ງມີງົວ ແລະ ຄວາຍ 3 ໂຕ.

ກ່ຽວກັບວຽກງານປ່າໄມ້ ໃນຊຸມປີຜ່ານມາແຂວງໄດ້ເອົາໃຈໃສ່ທັງປົກປັກຮັກສາບູລະນະປ່າໄມ້ ແລະທັງຂຸດຄົ້ນປຸງແຕ່ງ, ແຂວງໄດ້ສ້າງຕັ້ງບໍລິເວນຂຸດຄົ້ນ ແລະປຸງແຕ່ງໄມ້ແບບວົງປິດຂຶ້ນ ນັບແຕ່ປີ 1981 ມາເຖິງປັດຈຸບັນ ຄິດສະເລ່ຍແຕ່ລະປີຂຸດຄົ້ນໄມ້ໄດ້ 23ພັນແມັດກ້ອນ.

ວຽກງານຫັນເປັນສະຫະກອນກະເສດ ກໍ່ໄດ້ເອົາໃຈໃສ່ຢ່າງຫລວງຫລາຍ ໄລ່ມາເຖິງປີ 1985 ສະຫະກອນກະເສດໄດ້ກວມອັດຕາສ່ວນ 72% ຂອງຄອບຄົວຊາວນາ ແລະ80% ຂອງເນື້ອທີ່ນາທັງໝົດ. ໄປພ້ອມກັນນັ້ນແຂວງຍັງໄດ້ອອກແຮງຂະຫຍາຍສະຫະກອນຊື້-ຂາຍຕື່ມອີກ, ມາເຖິງດຽວນີ້ໄດ້ມີສະຫະກອນຊື້ຂາຍເຖິງ 323 ໜ່ວຍຈັດຕັ້ງການເກັບຊື້ເຄື່ອງປ່າຂອງດົງກຳແຫລ່ງສິນຄ້າ, ກຳເງິນ ແລະ ຄຸ້ມຄອງຕະຫລາດ. ດ້ວຍເຫດນັ້ນຈຶ່ງຊຸກຍູ້ໄດ້ການແຈກຢາຍຈໍລະຈອນໃຫ້ນັບມື້ນັບ ຂະຫຍາຍຕົວ ເຮັດໃຫ້ຍອດມູນຄ່າເກັບຊື້ສິນຄ້າເຄື່ອງປ່າຂອງດົງຈາກປະຊາຊົນປີ 1985 ເມື່ອທຽບໃສ່ປີ 1982 ແມ່ນເພີ່ມຂຶ້ນ 3, 8 ເທົ່າ, ຂາຍສິນຄ້າອຸດສາຫະກຳໃຫ້ປະຊາຊົນເພີ່ມຂຶ້ນ 6 ເທົ່າ, ຂາອອກເພີ່ມຂຶ້ນ 31ເທື່ອ, ສາມາດດຸນດ່ຽງງົບປະມານເອົາເອງໄດ້ແລະເຮັດພັນທະຕໍ່ສູນກາງຈຳນວນໜຶ່ງ.

ວຽກງານສຶກສາວັດທະນະທຳ, ສາທາລະນະສຸກກໍ່ໄດ້ຮັບການເອົາໃຈໃສ່ ແລະ ໄດ້ມີການຂະຫຍາຍຕົວຢ່າງກວ້າງຂວາງ ລົງເຖິງຮາກຖານ, ປະກອບສ່ວນເຂົ້າໃນການຍົກສູງຄວາມຮູ້ ແລະ ປົກປັກຮັກສາສຸຂະພາບ ຂອງປະຊາຊົນ, ລົບລ້າງບັນດາຮີດຄອງປະເພນີອັນຫລ້າຫລັງ, ການເຊື່ອຖືງົມງວາຍລົງເທື່ອລະກ້າວ. ໃນປີ 1981 ທົ່ວແຂວງໄດ້ ປະກາດລົບລ້າງຄວາມບໍ່ຮູ້ໜັງສືໂດຍພື້ນຖານ, ພ້ອມກັນນັ້ນກໍ່ໄດ້ຂະຫຍາຍໂຮງຮຽນ, ຫ້ອງຮຽນບຳລຸງວັດທະນະທຳ ແລະ ສາມັນສຶກສາຕື່ມອີກ, ມາຮອດປັດຈຸບັນໝົດທຸກບ້ານກໍ່ໄດ້ມີໂຮງຮຽນປະຖົມສຶກສາ, ທຸກເມືອງໄດ້ມີໂຮງຮຽນມັດທະຍົມ ແລະ ອຸດົມ, ຄິດສະເລ່ຍ ພົນ

ລະເມືອງ 3 ຄົນໃດມີຜູ້ໜຶ່ງໄດ້ເຂົ້າ ໂຮງຮຽນ.

ກ່ຽວກັບລະບົບພະເດັດການກຳມາຊີບແຕ່ແຂວງລົງຮອດຮາກຖານໄດ້ຮັບການກໍ່ສ້າງປັບປຸງວຽກງານປັບປຸງກໍ່ສ້າງພັກ, ກໍ່ສ້າງພະນັກງານໄດ້ຖືເປັນໜ້າທີ່ສຳຄັນພິເສດ ໂດຍ ຕິດແໜ້ນກັບການປະຕິບັດ ໜ້າທີ່ການເມືອງແຕ່ລະໄລຍະ ໃນວຽກງານກໍ່ສ້າງພັກ, ພະ ນັກງານນັ້ນ ພວກຂ້າພະເຈົ້າໄດ້ສົມທົບທັງ3ດ້ານການເມືອງ,ແນວຄິດ ແລະການຈັດຕັ້ງ,ເພີ່ມທະວີການສຶກສາອົບຮົມຍົກສູງຫລັກໝັ້ນທັດສະນະຊົນຊັ້ນກຳມະກອນໃຫ້ພະນັກງານສະມາຊິກພັກ.ປັບປຸງ ແລະ ເສີມຂະຫຍາຍ ບົດບາດການນຳພາຮອບດ້ານຂອງອົງຄະນະພັກ,ເປັນຕົ້ນແມ່ນໜ່ວຍພັກຂັ້ນຮາກຖານ.ຈຳນວນ ສະມາຊິກພັກໄດ້ເພີ່ມຂຶ້ນ 3 ເທື່ອ ຖ້າທຽບໃສ່ປີ 1977, ສະມາຊິກເສຍທາດຂາດຄຸນກໍ່ ລ້ວນແຕ່ໄດ້ແກ້ໄຂຕາມກົດລະບຽບຂອງພັກ.

ຖັນແຖວພະນັກງານເວົ້າລວມກໍ່ໄດ້ ເຕີບໃຫຍ່ຂະຫຍາຍຕົວທັງຈຳນວນ ແລະ ຄຸນນະພາບ, ໂດຍຜ່ານຈາກການທົດສອບຝຶກຝົນ ໃນວຽກງານຕົວຈິງ ແລະສົ່ງໄປຮຽນການເມືອງ, ວິຊາສະເພາະ,ວິຊາການຢູ່ພາຍໃນແລະຕ່າງປະເທດ.ມາຮອດປັດຈຸບັນຈຳນວນພະນັກງານໄດ້ເພີ່ມຂຶ້ນ 11 ເທົ່າທຽບກັບປີ 1975 .

ບັນດາຜົນສຳເລັດຂອງແຂວງຈຳປາ ສັກຍາດມາໄດ້ໃນ 10 ປີຜ່ານມາຢືນຢັນວ່າ : ແຂວງໄດ້ຮູ້ໝູນໃຊ້ແນວທາງ, ແຜນນະໂຍບາຍ,ນະໂຍບາຍຕ່າງໆຂອງພັກຢ່າງຖືກຕ້ອງ.

ຄຽງຂ້າງກັບຈຸດດີ ແລະຜົນງານດັ່ງກ່າວ, ແຂວງພວກຂ້າພະເຈົ້າກໍ່ຍັງມີຈຸດອ່ອນແລະ ຂໍ້ຄົງຄ້າງຫລາຍປະການ ເປັນຕົ້ນແມ່ນ:

- ພະນັກງານສະມາຊິກ ແລະປະຊາຊົນຈຳນວນໜຶ່ງຍັງຂາດສະຕິລະວັງຕົວຕໍ່ກົນ ອຸບາຍຂອງສັດຕູ, ຫລັກໝັ້ນມິດ-ສັດຕູ,ຄວາມຮັບຮູ້ກ່ຽວກັບການຕໍ່ສູ້ລະຫວ່າງສອງເສັ້ນທາງໃຜເອົາຊະນະໃຜ ຍັງບໍ່ທັນຈະແຈ້ງຍ້ອນແນວນັ້ນ ຈຶ່ງເຮັດໃຫ້ພົນຖານປ້ອງກັນຊາດ, ປ້ອງກັນຄວາມສະຫງົບຢູ່ຮາກຖານມີຫລາຍບ່ອນ ບໍ່ທັນໜັກແໜ້ນ ແລະ ຮັບປະກັນເທື່ອ.

- ພວກຂ້າພະເຈົ້າບໍ່ທັນໄດ້ເອົາ ໃຈໃສ່ຂຸດຄົ້ນແລະເສີມຂະຫຍາຍທຸກຄວາມສາ ມາດອັນບົ່ມຊ້ອນຂອງທ້ອງຖິ່ນເປັນຢ່າງດີແທ້ເທື່ອ, ໃນການດັດສ້າງສັງຄົມນິຍົມ ພວກຂ້າພະເຈົ້າມີທ່າອ່ຽງອັດຕະວິໄສ ຟ້າວຟັ່ງ ຢາກທັນທຸກພາກສ່ວນເສດຖະກິດໃຫ້ເປັນສັງຄົມນິຍົມ ໃນທັນທີທັນໃດໂລດ, ຕົວຢ່າງປຸກລະດົມຊາວນາເຂົ້າສະຫະກອນ ໂດຍບໍ່ຄິດໄລ່ເຖິງຄວາມສາມາດ ທັງດ້ານການຄຸ້ມຄອງຂອງພະນັກ ງານແລະ ລະດັບຂະຫຍາຍຕົວຂອງກຳລັງການຜະລິດຢູ່ແຕ່ລະບ່ອນ,ຜົນເສຍຫາຍແມ່ນ ເຮັດໃຫ້ການຜະລິດຢ້ຳເທົ່າຢູ່ກັບບ່ອນ ຫລືຫລຸດລົງອີກຊ້ຳ, ເຮັດໃຫ້ບາດກ້າວຂອງຂະບວນການຈັດຊ້າລົງ. ໃນການຄຸ້ມຄອງເສດຖະກິດຍັງມີ ທ່າ

ອຽງໄປຕາມກົນໄກເກົາ, ບໍ່ຄິດໄລ່ເຖິງປະສິດທີຜົນທາງດ້ານເສດຖະກິດ, ຫລືມີແຕ່ຄິດຢາກໄດ້ແຕ່ກຳໄລດ້ານດຽວ.

- ພວກຂ້າພະເຈົ້າບໍ່ທັນເສີມຂະ ຫຍາຍ ແລະ ສົມທົບຢ່າງໜັກແໜ້ນລະຫວ່າງ ວຽກງານສຶກສາ ສາທາລະນະສຸກ ວັດທະ ນະທຳ ກັບວຽກງານແນວຄິດການເມືອງເຂົ້າໃສ່ ໃນການກໍ່ສ້າງຄົນໃຫມ່ສັງຄົມນິຍົມ ເປັນຕົ້ນ ໃນການສຶກສາອົບຮົມໄວໜຸ່ມ ເພື່ອໃຫ້ເຂົາກາຍເປັນຄົນທີ່ມີຄຸນສົມບັດ, ມີຄວາມສາມາດແລະສຸຂະພາບອັນເຂັ້ມແຂງ ເພື່ອສາມາດ ສືບທອດພາລະກິດປະຕິວັດຂອງພັກ.

ສະຫາຍ ທັງຫລາຍ !

ຜ່ານຂະບວນວິວັດແຫ່ງການປະຕິບັດແນວທາງແຜນນະໂຍບາຍຂອງພັກ ອົງຄະນະ ພັກແຂວງຈຳປາສັກຖອດຖອນບົດຮຽນເບື້ອງ ຕົ້ນໄດ້ ຈຳນວນໜຶ່ງ ດັ່ງນີ້:

- ແນວທາງ, ແຜນນະໂຍບາຍແລະນະໂຍບາຍຂອງພັກ ແມ່ນຖືກຕ້ອງທີ່ສຸດ, ປະຊາຊົນຜູ້ອອກແຮງງານບັນດາເຜົ່າ ເຫັນດີ ເຫັນພ້ອມກັບແນວທາງດັ່ງກ່າວຢ່າງສົມບູນ, ຖ້າຄະນະພັກແຕ່ລະຂັ້ນ, ພະນັກງານ, ສະມາຊິກ ແຕ່ລະຄົນຫາກເຊື່ອມຊຶມກຳແໜ້ນແນວທາງ ນະໂຍບາຍ, ມີຄວາມຕັດສິນໃຈສູງ, ມີວິທີການຈັດຕັ້ງປະຕິບັດອັນຖືກຕ້ອງ, ເຮັດໃຫ້ຄວາມຕັດສິນໃຈພາຍໃນພັກກາຍເປັນຄວາມຕັດສິນໃຈຂອງມະຫາຊົນຢ່າງກວ້າງຂວາງແລ້ວເຖິງວ່າວຽກງານນີ້ຈະຫຍຸ້ງຍາກສັບສົນປານໃດກໍ່ຕາມ ກໍ່ສາມາດເຮັດສຳເລັດຢ່າງຂາດຕົວ .

- ໃນການຈັດຕັ້ງປະຕິບັດ ຕ້ອງ ຖືເອົາໜ້າທີ່ປົກປັກຮັກສາປະເທດຊາດເປັນໜ້າ ທີ່ອັນດັບໜຶ່ງ, ໜ້າທີ່ກໍ່ສ້າງສັງຄົມນິຍົມເປັນອັນພື້ນຖານ, ບັນຫານີ້ມັນໄດ້ສ່ອງແສງຢູ່ໃນ ທຸກຂົງເຂດວຽກງານຂອງພວກເຮົາ ຕົວຢ່າງສະຫະກອນໂຄກສະຫວ່າງ ຢູ່ຕິດກັບຊາຍແດນໄທເມື່ອກ່ອນຮາກຖານການເມືອງຍັງອ່ອນແຕ່ໃນເວລານີ້ພວກເຮົາໄດ້ກໍ່ສ້າງສະຫະກອນ ກະເສດຂຶ້ນແລ້ວ ມີການນຳພາຄຸ້ມຄອງດີ ກໍ່ສ້າງການພົວພັນ ການຜະລິດ ໃຫມ່ ຍົກສູງ ຊີວິດການເປັນຢູ່ຂອງສະມາຊິກສະຫະກອນດີຂຶ້ນລື່ນເວລາຜະລິດເອກະເທດຢ່າງຂາດຂັ້ນ, ຈາກນັ້ນ ຈຶ່ງມີຂະບວນການຂອງມະຫາຊົນຕີສົດໆ, ຮັກສາຄວາມສະຫງົບ ບ້ານເມືອງ ຢ່າງໜັກແໜ້ນຕະຫລອດມາ.

- ການກໍ່ສ້າງສັງຄົມນິຍົມ ຕ້ອງເລີ່ມແຕ່ຮາກຖານຂຶ້ນມາ ເພາະວ່າຮາກຖານແມ່ນຫົວໜ່ວຍປະຕິບັດທຸກແຜນນະໂຍບາຍ ແລະ ນະໂຍບາຍຂອງພັກ ແລະ ລັດ, ປະຕິບັດ ສອງໜ້າທີ່ຍຸດທະສາດ, ດຳເນີນການ ປະຕິວັດສາມປະການ, ເຮັດໃຫ້ຜູ້ອອກແຮງງານ ແຕ່ລະຄົນກາຍເປັນຜູ້ກໍ່ສ້າງສັງຄົມນິຍົມໂດຍກົງ.

- ເພື່ອປະຕິບັດແຜນການ ນະໂຍບາຍຂອງພັກໃນແຕ່ລະໄລຍະ ຕ້ອງມີການກວດກາຢ່າງເປັນປະຈຳ ຜ່ານການກວດກາເພື່ອຊອກ

ເຫັນຈຸດດີ ແລະ ປັດໄຈໃຫມ່ທີ່ເກີດຂຶ້ນ, ປະຕິບັດການຍ້ອງຍໍຢ່າງທັນການ ເພື່ອຊຸກຍູ້ ຂະບວນການ ແລະ ເຜີຍແຜ່ບົດຮຽນໃຫ້ບ່ອນອື່ນຢ່າງກ້ວາງຂວາງ, ພ້ອມກັນນັ້ນກໍ່ເພື່ອກຳຈັດປັດເປົ່າຈຸດອ່ອນ ແລະ ຂໍ້ບົກພ່ອງເຮັດໃຫ້ຂະບວນການສາມາດກ້າວຂຶ້ນຢ່າງຫນັກແຫນ້ນ .

- ຕ້ອງເຫັນ ການພົວພັນ ແລະ ຮູ້ສົມທົບລະຫວ່າງຄົນກັບວຽກ ແລະລະຫວ່າງວຽກສະເພາະຫນ້າ ແລະຍາວນານ ຫມາຍຄວາມວ່າ ຕ້ອງອີງໃສ່ຂະບວນການແຕ່ລະຂັ້ນ ເພື່ອຊອກເຫັນວຽກເດັ່ນຄົນດີ ແລະ ຜ່ານຂະບວນການເພື່ອກໍ່ສ້າງຫລັກແຫລ່ງ ແລະ ບຳລຸງພະນັກງານຈາກຂັ້ນຮາກຖານຂຶ້ນມາ, ສ້າງເງື່ອນໄຂເພື່ອຂະຫຍາຍ ແລະກໍ່ສ້າງພັກໃຫ້ຕິດແທດກັບຂະບວນການ.

ຮຽນ ບັນດາສະຫາຍ !

ສຸດທ້າຍນີ້ ຂ້າພະເຈົ້າຂໍສະແດງ ຄວາມເຫັນດີເຫັນພ້ອມຢ່າງສົມບູນ ຕໍ່ລາຍງານການເມືອງ ຂອງຄະນະ ບໍລິຫານງານ ສູນ ກາງພັກ ໂດຍແມ່ນ ສະຫາຍ ເລຂາ ທິການໃຫຍ່ໄກສອນ ພົມວິຫານ ທີ່ເຄົາລົບຮັກ ໄດ້ນຳສະເຫນີຕໍ່ກອງປະຊຸມໃຫຍ່ຄັ້ງນີ້ ແລະ ຕັດສິນໃຈນຳພາປະຊາຊົນແຂວງຂອງຂ້າພະເຈົ້າ ປະຕິບັດໃຫ້ເປັນຫມາກເປັນຜົນຕົວຈິງ .

*

* *



# ບົດລາຍງານ

ຂອງ ສະຫາຍ ສະຫວັດ ພູບຸບປຸກ

# ຕາງໜ້າໂຮງງານຜະລິດ ໄຟຟ້ານ້ຳງື່ມ

## ຕໍ່ກອງປະຊຸມໃຫຍ່ຄັ້ງທີ່ IV ຂອງພັກ

ຮຽນ: ຄະນະປະທານ !

ຮຽນ: ບັນດາສະຫາຍຜູ້ແທນແລະ
ແຂກທີ່ ນັບຖື !

ຂ້າພະເຈົ້າຮູ້ສຶກພາກພູມໃຈເປັນຢ່າງຍິ່ງທີ່ໄດ້ຮັບກຽດອັນສູງ ຕາງໜ້າໃຫ້ໜ່ວຍ ພັກ ແລະກຳມະກອນຂອງໂຮງງານໄຟຟ້າ ນ້ຳງື່ມ ຂຶ້ນມາລາຍງານບາງຈຸດ ກ່ຽວກັບການ ເຕີບໃຫຍ່ຂະຫຍາຍຕົວຂອງໂຮງງານພາຍໃຕ້ການນຳພາຂອງພັກໃນຊຸມປີທີ່ຜ່ານມາ ຕໍ່ກອງ ປະຊຸມໃຫຍ່ຂອງພັກອັນສະຫງ່າລາສີນີ້. ກ່ອນອື່ນ ຂ້າພະເຈົ້າຂໍສະແດງຄວາມຄຳນັບ ແລະ ຊົມເຊີຍກອງປະຊຸມໃຫຍ່ຄັ້ງທີ IV ຂອງ ພັກຢ່າງສຸດອົກສຸດໃຈ.

ບັນດາສະຫາຍ ທີ່ນັບຖື !

ໂຮງງານຜະລິດໄຟຟ້ານ້ຳງື່ມຕັ້ງຢູ່ ຫ່າງຈາກນະຄອນຫລວງວຽງຈັນໄປທາງທິດ ຕາເວັນອອກສ່ຽງເໜືອ 80 ກິໂລແມັດ, ປະກອບດ້ວຍເຄື່ອງຈັກໄຟຟ້າຜະລິດດ້ວຍ ພະລັງນ້ຳເຊິ່ງແຕ່ກ່ອນກຳລັງແຮງຂອງເຄື່ອງຈັກ ມີພຽງແຕ່ 30 ພັນກິໂລວັດເທົ່ານັ້ນ ແຕ່ຫລັງຈາກປະເທດຊາດໄດ້ຮັບການປົດປ່ອຍພັກ-ລັດ

ໄດ້ເອົາໃຈໃສ່ສືບຕໍ່ລົງທຶນຂະຫຍາຍ ກຳລັງແຮງການຜະລິດຢ່າງສຸດຂີດ, ມາຮອດ ປັດຈຸບັນນີ້ໄດ້ເພີ່ມຂຶ້ນເປັນ 150 ພັນ ກິໂລວັດ. ໂຮງງານຂອງພວກເຮົາມີຈຳນວນກຳມະກອນທັງຫມົດ 215 ຄົນ, ຖ້ານັບທັງລູກເມຍຂອງເຂົາເຈົ້າລວມທັງຫມົດ 700 ຄົນ.

ເມື່ອພວກເຮົາເຂົ້າມາຄຸ້ມຄອງໂຮງງານອັນໃຫຍ່ ແລະທັນສະໄຫມລະດັບຫນຶ່ງຢູ່ໃນປະເທດຂອງພວກເຮົານີ້ຂັ້ນຕົ້ນ ພວກເຮົາພົບກັບຄວາມຫຍຸ້ງຍາກ ແລະອຸປະສັກນາໆປະການ, ເປັນຕົ້ນ: ຖັນແຖວພະນັກງານ, ກຳມະກອນເກືອບຫມົດທຸກຄົນແມ່ນມາຈາກລະບອບເກົາ, ລະດັບຄວາມຮູ້ທາງດ້ານວິຊາສະເພາະ, ເຕັກນິກສ່ວນຫລາຍແມ່ນຢູ່ໃນລະດັບຕ່ຳ, 20% ບໍ່ຮູ້ຫນັງສື. ເຖິງວ່າມີຈຳນວນຫນຶ່ງໄດ້ຮຽນຈົບວິຊາສະເພາະໄຟຟ້າຢູ່ພາຍໃນປະເທດ ແຕ່ໃນໄລຍະກໍ່ສ້າງໂຮງງານນີ້ ກໍ່ພຽງແຕ່ ເປັນກຳມະກອນຊ່ວຍວຽກອັນງ່າຍດາຍເຊັ່ນ: ຍົກຍໍແບກຫາມ ແລະທຳຄວາມສະອາດ, ຜັດຖູເຄື່ອງຈັກເຄື່ອງລາງໃຫ້ວິຊາວະກອນຕ່າງປະເທດເທົ່ານັ້ນ, ພະນັກງານວິຊາສະເພາະຊັ້ນສູງເກືອບວ່າບໍ່ມີ, ດັ່ງນັ້ນບົດຮຽນໃນການຄຸ້ມຄອງບັນຊາເຄື່ອງຈັກ ແລະດຳເນີນການ ຜະລິດແມ່ນຖືກຈຳກັດທີ່ສຸດ, ລະດັບຄວາມຕື່ນຕົວປະຕິວັດຍັງຕ່ຳ, ສະມາຊິກພັກກໍ່ຍັງບໍ່ທັນມີ, ອົງການຈັດຕັ້ງມະຫາຊົນ ກໍ່ຍັງບໍ່ທັນໄດ້ຈັດຕັ້ງເປັນຮູບເປັນຮ່າງ, ຊີວິດການເປັນຢູ່ຂອງພະນັກງານ, ກຳມະກອນກໍ່ພົບຄວາມ ຫຍຸ້ງຍາກ ແລະຝືດເຄືອງ, ຊ່ຽວຊານ ແລະນັກວິຊາວະກອນຕ່າງປະເທດທີ່ຊ່ວຍສ້າງໂຮງງານ ທັງຫມົດ ແມ່ນມາຈາກບັນດາປະເທດທຶນນິຍົມ . ພ້ອມກັນນັ້ນ ສະພາບຄວາມສະຫງົບທາງດ້ານການເມືອງ ແລະຄວາມເປັນລະບຽບ ຮຽບຮ້ອຍທາງດ້ານສັງຄົມຂອງທ້ອງຖິ່ນທີ່ຢູ່ ອ້ອມແອ້ມນັ້ນ ກໍ່ຍັງສັບສົນທີ່ສຸດ, ສັດຕູຫາທຸກ ວິທີທາງເພື່ອທຳລາຍມ້າງເພ, ກໍ່ຄວາມ ຫຍຸ້ງຍາກໃຫ້ແກ່ການດຳເນີນການຜະລິດຂອງໂຮງງານ, ໂດຍສະເພາະແມ່ນໃຊ້ສົງຄາມຈິດຕະສາດ ເພື່ອກຸກກວນ, ສ້າງຄວາມບໍ່ ສະຫງົບໃນຖັນແຖວພະນັກງານ, ກຳມະກອນໃນໂຮງງານຂອງພວກເຮົາຢ່າງເປັນປະຈຳ.

ເຖິງຢ່າງນັ້ນກໍ່ຕາມໃນ 10 ປີທີ່ຜ່ານມາ ພາຍໃຕ້ການນຳພາຂອງພັກ ປະຊາຊົນ ປະຕິວັດລາວ, ອັນມີສະຫາຍ ເລຂາທິການ ໃຫຍ່ ໄກສອນ ພົມວິຫານ ທີ່ເຄົາລົບຮັກ ເປັນຜູ້ນຳຫນ້າ, ໂດຍໄດ້ຮັບການຊີ້ນຳ ນຳພາຂອງກະຊວງອຸດສາຫະກຳ, ຫັດຖະກຳໂດຍໄດ້ຮັບການຊີ້ນຳໂດຍກົງຂອງບໍລິສັດໄຟຟ້າລາວ, ໂດຍໄດ້ຮັບການຊ່ວຍເຫລືອປະສານ ສົມທົບ ຂອງຂະແຫນງການອື່ນໆຢູ່ສູນກາງກໍ່ຄືເຈົ້າຫນ້າທີ່ທ້ອງຖິ່ນ. ພວກເຮົາໄດ້ຕັດສິນໃຈບຸກບືນຜ່ານຜ່າ ຂໍ້ຫຍຸ້ງຍາກ ແລະອຸປະສັກນາໆປະການດັ່ງກ່າວມາຂ້າງເທິງ ເພື່ອສ້າງໂຮງງານໄຟຟ້າ ນ້ຳງື່ມ ກາຍເປັນໂຮງງານສັງຄົມນິຍົມເທື່ອ ລະ

ກ້າວ ເຊິ່ງສົມກັບຄວາມເອົາໃຈໃສ່ ແລະໄວ້ວາງໃຈຈາກພັກ ແລະ ລັດ.

ຂະບວນວິວັດແຫ່ງການກ້າວຂຶ້ນຂອງພວກເຮົານັ້ນ ໃນຊຸມປີເບື້ອງຕົ້ນ ພວກເຮົາ ພົບຄວາມຫຍຸ້ງຍາກຫລາຍຢ່າງ ຍ້ອນບໍ່ທັນ ມີໜ່ວຍພັກ ແລະສະມາຊິກພັກນຳພາໂດຍກົງຢູ່ໃນໂຮງງານ. ເລີ່ມແຕ່ປີ 1978 ເປັນຕົ້ນມາຂັ້ນເທິງຈຶ່ງສົ່ງສະມາຊິກພັກ 1 ສະຫາຍລົງປະຈຳໂຮງງານຈາກນັ້ນມາ ຈຶ່ງໄດ້ເລີ່ມມີການຂະຫຍາຍພັກເທື່ອທຳອິດຂະຫຍາຍໄດ້ 6 ສະຫາຍ ຈຶ່ງມີຈຸພັກແລະນັບຕັ້ງແຕ່ປີ 1983 ເປັນຕົ້ນມາ ຍ້ອນມີສະມາຊິກພັກເພີ່ມຂຶ້ນ ຈຶ່ງໄດ້ຈັດຕັ້ງເປັນໜ່ວຍພັກຂອງໂຮງງານນັບແຕ່ມີໜ່ວຍພັກຂຶ້ນມາ ພວກເຮົາໄດ້ບຸກບືນນຳພາ ໂດຍໃຊ້ເວລາບໍ່ດົນປານໃດກໍ່ໄດ້ຮັບການ ຢັ້ງຢືນເປັນໜ່ວຍພັກແຂງຮອບດ້ານ.

ການກໍ່ສ້າງພັກ ພວກຂ້າພະເຈົ້າ ໄດ້ສົມທົບທັງສາມດ້ານ: ດ້ານການເມືອງ,ແນວຄິດ ແລະການຈັດຕັ້ງໄປພ້ອມໆກັນ. ພວກເຮົາຂະຫຍາຍພັກຕາມຂະບວນການຂອງ ວຽກງານ ໂດຍເລືງໃສ່ຜູ້ທີ່ພົ້ນເດັ່ນຂຶ້ນໃນຂະບວນ ວິວັດຂອງວຽກງານຕົວຈິງ.

ໜ່ວຍພັກພວກຂ້າພະເຈົ້າ ໄດ້ຄົ້ນຄວ້າ ແລະເປັນເອກະພາບກັນວ່າ ເພື່ອຢາກນຳພາວິຊາສະເພາະໄດ້ດີ ແມ່ນພວກເຮົາຕ້ອງເອົາໃຈໃສ່ເຮັດວຽກງານນຳພາແນວຄິດ ພະນັກງານກຳມະກອນ, ສ້າງທັດສະນະໃໝ່ ໃຫ້ເຂົາເຈົ້າໂດຍເອົາແນວທາງນະໂຍບາຍຂອງພັກລົງສູ່ທຸກໜ່ວຍງານ ແລະໃຫ້ໄປເຖິງ ແຕ່ລະຄົນ. ການສຶກສາອົບຮົມແນວຄິດ ການເມືອງ ແມ່ນພວກເຮົາໄດ້ເຮັດຫລາຍຮູບຫຼາຍແບບຈັດຕັ້ງຮ່ຳຮຽນການເມືອງ, ດຳເນີນ ຊີວິດການເມືອງຂອງອຳນາດການປົກຄອງ,ອົງການຈັດຕັ້ງມະຫາຊົນເປັນປະຈຳ ແຕ່ອັນທີ່ໄດ້ຜົນດີ ແລະທັນການທີ່ສຸດນັ້ນແມ່ນແຕ່ລະ ເຊົ້າກ່ອນໂມງເຂົ້າການ ພວກຂ້າພະເຈົ້າໄດ້ເຕົ້າໂຮມກຳມະກອນເຄົາລົບທຸງແລ້ວເອົາ ເວລາ 10–15 ນາທີເຜີຍແຜ່ຂ່າວສົດປະຈຳວັນຂ່າວພາຍໃນ ແລະຕ່າງປະເທດ, ສັງເກດ ວຽກງານຂອງໂຮງງານໃນມື້ທີ່ຜ່ານມາ... ເປັນຕົ້ນ. ອີກອັນໜຶ່ງທີ່ສຳຄັນທີ່ສຸດ ແມ່ນພາຍໃນພັກຕ້ອງປອດໃສຂາວສະອາດ, ການດຳເນີນຊີວິດຕ້ອງເອົາການຕິຊົມກໍ່ສ້າງກັນເປັນ ອາຈຸດ, ສ້າງຄວາມເປັນເອກະພາບສູງພາຍໃນພັກ, ລະຫວ່າງພັກກັບອຳນາດ. ການປົກຄອງ ແລະອົງການຈັດຕັ້ງມະຫາຊົນ.

ທາງດ້ານວິຊາສະເພາະພວກຂ້າພະເຈົ້າ ໄດ້ປຸກລະດົມ,ເຕົ້າໂຮມ ແລະເສີມຂະຫຍາຍຫົວຄິດປະດິດສ້າງ ແລະ ຄວາມອາດສາມາດບົ່ມຊ້ອນຂອງພະນັກງານ, ກຳມະກອນ ເພື່ອແກ້ໄຂວຽກງານດ້ວຍຈິດໃຈເພິ່ງຕົນເອງ,ກຸ້ມຕົນເອງຫລຸດຜ່ອນການນຳໃຊ້ຊິ້ນວຊານ ຕ່າງປະເທດທີ່ເຫັນວ່າບໍ່ມີຄວາມຈຳເປັນ ບົນ ຈິດໃຈກ້າເຮັດ, ກ້າຕັດສິນ ແລະກ້າຮັບຜິດຊອບ;

ຈັດຕັ້ງບຳລຸງວິຊາສະເພາະ ແລະ ແລກປ່ຽນບົດຮຽນວິຊາສະເພາະລະຫວ່າງ ກຳມະກອນດ້ວຍກັນ; ນຳສິ່ງກຳມະກອນລົງປະຕິບັດວຽກງານຕົວຈິງ ໃນການຄຸ້ມຄອງແລະຕິດຕັ້ງ ປະກອບເຄື່ອງຈັກ ເພື່ອເຮັດໃຫ້ເຂົາເຈົ້າ ກາຍເປັນຜູ້ມີປະສົບປະການໃນວຽກງານຕົວຈິງ . ຜ່ານ ການປະຕິບັດຕາມທິດທາງດັ່ງ ກ່າວມາຂ້າງເທິງນັ້ນ ມາຮອດດຽວນີ້ອາດເວົ້າໄດ້ວ່າ: ພວກເຮົາມີຄວາມສາມາດຄຸ້ມຄອງ ບັນຊາເຄື່ອງຈັກ ດ້ວຍກຳມະກອນ ວິຊາວະກອນລາວຂອງເຮົາເອງໄດ້, ອັນທີເດີມແມ່ນ ກຳມະກອນພາກສ່ວນຄຸ້ມຄອງກົນຈັກໄດ້ຫລໍ່ ຫົວສາຍກາບເຄື່ອງຍົກປະຕູທໍ່ສົ່ງນ້ຳຂອງ ເຄື່ອງຈັກເບີ 1,ເບີ 2 ຈຳນວນ 4 ຫົວເອົາເອງໄດ້ ເພື່ອປ່ຽນສາຍຍົກປະຕູນ້ຳໂຕເກົ່າທີ່ ຖືກສຳຫລຸດ, ອັນໄດ້ເປັນການປະຢັດເງິນ ຕາຕ່າງປະເທດເຖິງ 60 ພັນໂດລາ; ພວກເຮົາໄດ້ສ້າງມະນຸດກົບໄດ້ຈຳນວນຫນຶ່ງ ເພື່ອ ແກ້ໄຂບັນຫາປະຕູນ້ຳທ້າຍຈັກສອງເຄື່ອງຊຶ່ງມີບັນຫາມາແຕ່ປີ 1979 ຊຶ່ງກ່ອນນີ້ຈຳຕ້ອງໄດ້ສິ້ນເປືອງຈ້າງມະນຸດກົບມາຈາກຕ່າງປະເທດ.. ພວກຂ້າພະເຈົ້າໄດ້ສ້ອມແປງເພົາຈອດໃບພັດກັງຫັນພະລັງນ້ຳ ທີ່ຖືກນ້ຳກັດເລິກ ເອົາເອງໄດ້ ເຊິ່ງຜ່ານມາໃນກໍລະນີນີ້ ຕ້ອງຈ້າງຊ່ຽວຊານຕ່າງປະເທດຜູ້ທີ່ມີເຕັກນິກສູງຈອດຈຶ່ງຈະຮັບປະກັນຄຸນນະພາບທີ່ເປັນການປະຢັດ ເງິນຕາຕ່າງປະເທດໄດ້ເຖິງ 70 ພັນໂດລາ ;

ສ່ວນກຳມະກອນພາກສ່ວນຄຸ້ມຄອງໄຟຟ້າແລະກົນຈັກ ກໍ່ໄດ້ຍົກນ້ຳໃຈຮັບຜິດຊອບຂອງຕົນສູງໃນການແກ້ໄຂການຕິດຂັດຂອງລະບົບຂອງຕົນ ຢ່າງທັນການ ທັງອອກແຮງແຂ່ງຂັນກັນຮັບໃຊ້ທຸກເວລາ ນັບທັງກາງຄືນແລະກາງເວັນ, ວັນທຳມະດາ ແລະວັນພັກ. ນອກນັ້ນເຂົາເຈົ້າກໍ່ຍັງໄດ້ໄປຊ່ວຍເຊື່ອມໄຟຟ້າຂອງແຂວງຈຳປາສັກ ແລະຫລວງພະບາງອີກດ້ວຍ.

ຫນ່ວຍພັກ ຂອງພວກຂ້າພະເຈົ້າໄດ້ເອົາໃຈໃສ່ຊີ້ນຳ ນຳພາ ອົງການຈັດຕັ້ງມະຫາຊົນໃຫ້ປະຕິບັດຕາມພາລະບົດບາດຂອງຕົນເອັນ: ຫນ່ວຍກຳມະບານເຊິ່ງມີສະມາຊິກ 179 ສະຫາຍ ໃຫ້ລົງເລິກແກ້ໄຂຊີວິດການເປັນຢູ່ ຂອງພະນັກງານ, ກຳມະກອນ, ເຂົ້າຮ່ວມ ວຽກງານຄຸ້ມຄອງລັດ, ປ້ອງກັນແຮງງານ ແລະການກໍ່ສ້າງຊຸກຍູ້ຂະບວນການແຂ່ງຂັນສັງຄົມນິຍົມ; ຫນ່ວຍຊາວຫນຸ່ມທີ່ມີສະມາຊິກ 93 ສະຫາຍແມ່ນຮັບຜິດຊອບວຽກງານປ້ອງກັນຄວາມສະຫງົບ, ວຽກງານກໍ່ສ້າງເຢົາວະຊົນ ແລະໃຫ້ອອກຫນ້າຕະລຸມບອນເຂົ້າໃນວຽກງານ ທີ່ສັບສົນກວ່າຫມູ່, ຫຍຸ້ງຍາກກວ່າຫມູ່...ເປັນຕົ້ນ. ຫນ່ວຍສະຫະພັນແມ່ຍິງໃຫ້ເອົາ ໃຈໃສ່ສ້າງກຳລັງເພດຍິງ, ເບິ່ງແຍງສູນຝາກເດັກ ແລະວຽກງານສະຫວັດດີການ ແລະອື່ນໆ... ທັງຫມົດເຫລົ່ານີ້ແມ່ນພາຍໃຕ້ການຊີ້ນຳນຳພາຢ່າງໃກ້ຊິດຂອງຄະນະພັກຫນ່ວຍ.

ຄະນະພັກຫນ່ວຍແລະຄະນະອຳນວຍການ

ໂຮງຮຽນຂອງພວກຂ້າພະເຈົ້າຖືສຳຄັນ ທາງດ້ານການແກ້ໄຂຊີວິດການເປັນຢູ່ຂອງ ພະນັກງານ, ກຳມະກອນ ແລະຄອບຄົວລູກ ເມຍຂອງເຂົາເຈົ້າ, ໄດ້ພະຍາຍາມດັດແປງການເບີກຈ່າຍເງິນເດືອນ, ຄ່າແຮງໃຫ້ ເໝາະສົມເທືອລະກ້າວ ໂດຍສະເພາະນັບແຕ່ເດືອນ ກໍລະກົດ 1986 ນີ້ເປັນຕົ້ນມາຫລັງຈາກພວກຂ້າພະເຈົ້າໄດ້ຮັບສິດເປັນເຈົ້າຄຸ້ມຄອງ ໂຮງງານນີ້ໄດ້ຫັນບັນດາຫົວໜ່ວຍເສດຖະກິດ ໄປສູ່ການຜະລິດທຸລະກິດຕາມກົນໄກຄຸ້ມຄອງເສດຖະກິດໃໝ່, ໄດ້ປະຕິບັດການເບີກຈ່າຍ ຄ່າແຮງງານຕາມຜະລິດພັນສຸດທ້າຍໃຫ້ແກ່ກຳມະກອນ, ທັງດຳເນີນທົດສອບວິຊາຊ່າງ ແຕ່ລະເດືອນ ເພື່ອຊອກໃຫ້ເຫັນບັນດານາຍຊ່າງ ຜູ້ຊຳນິ ຊຳນານ ແລະມີສີມືດີເດັ່ນ ເພື່ອແນໃສ່ຍົກຄຸນນະພາບຂອງງານໃຫ້ສູງ. ຜ່ານ ການປະຕິບັດກົນໄກໃໝ່ ກຳມະກອນໄດ້ເພີ່ມລາຍໄດ້ຂຶ້ນລະຫວ່າງ 20-30% ອັນເປັນການກະຕຸກຊຸກຍູ້ການຜະລິດ ແລະສ້າງຄວາມ ເຊື່ອໝັ້ນໃຫ້ເຂົາເຈົ້າໃນຫລັກການທີ່ວ່າຜູ້ເຮັດໄດ້ຫລາຍ, ເກັ່ງແມ່ນໄດ້ຮັບຜົນປະໂຫຍດຫຼາຍ, ຜູ້ເຮັດໄດ້ໜ້ອຍແມ່ນໄດ້ຮັບຜົນປະໂຫຍດນ້ອຍ ແລະຜູ້ເຮັດເປ່ເພເສຍຫາຍ, ຂາດຄວາມຮັບຜິດຊອບແມ່ນໄດ້ຖືກສຳຫລວດກວດກາ ຢ່າງເຂັ້ມງວດ; ວຽກງານຄຸ້ມຄອງພະນັກງານ, ກຳມະກອນກໍ່ໄດ້ເປັນລະບຽບແບບແຜນດີກວ່າເກົ່າ.

ໃນວິທີການແກ້ໄຂຊີວິດການເປັນຢູ່ ນັ້ນພວກຂ້າພະເຈົ້າບໍ່ໄດ້ຢຸດຢູ່ບ່ອນດັດແປງ ການເບີກຈ່າຍເງິນເດືອນ ແລະຄ່າແຮງງານເທົ່ານັ້ນ ແຕ່ຍັງໄດ້ເອົາໃຈໃສ່ຊຸກຍູ້ ເສດຖະກິດຄອບຄົວ ເຊິ່ງປັດຈຸບັນສະເລ່ຍແລ້ວ 1ຄອບຄົວໄດ້ລ້ຽງໝູປະມານ 3 ໂຕ, ພວກຂ້າພະເຈົ້າມີໜ່ວຍລ້ຽງສັດສ່ວນລວມໝີງົວ 108 ໂຕ, ມີຮ້ານຄ້າລັດຖະກອນ, ຮ້ານອາຫານ, ໜ່ວຍຕັດຫຍິບ, ມີໂຮງສີເຂົ້າ ແລະອື່ນໆ...

ໜ່ວຍພັກຂອງພວກເຮົາ ໄດ້ຮຽນປະຊາສຶກສາ ແລະບຳລຸງວັດທະນະທຳຢ່າງເປັນປົກກະຕິ, ສາມາດລຶບລ້າງຄວາມບໍ່ຮູ້ໜັງສື ໄດ້ ແລະກ້າວຂຶ້ນບຳລຸງວັດທະນະທຳໃຫ້ ກຳມະກອນມີລະດັບສູງຂຶ້ນເລື້ອຍໆ ທັງສ້າງ ເງື່ອນໄຂໃຫ້ກຳມະກອນຜູ້ດີເດັ່ນໄດ້ໄປຮຽນຕໍ່ ວິຊາສະເພາະຊັ້ນກາງ, ຊັ້ນສູງຢູ່ພາຍໃນ ແລະຕ່າງປະເທດ. ປັດຈຸບັນຢູ່ພາຍໃນໂຮງ ງານພວກເຮົາມີໂຮງຮຽນອະນຸບານ, ໂຮງ ຮຽນປະຖົມ, ມັດທະຍົມສຶກສາ, ມີໂຮງໝໍ, ມີໜ່ວຍກິລາ, ໜ່ວຍສິນລະປະວັນນະຄະດີ.

ຍັນດາສະຫາຍຜູ້ແທນທີ່ນັບຖື !

ຍ້ອນເຫັນແຈ້ງກົນອຸບາຍທຳລາຍມ້າງເພຂອງສັດຕູ ໜ່ວຍພັກໂຮງງານຂອງພວກຂ້າພະເຈົ້າບໍ່ໄດ້ຖືເບົາວຽກງານປ້ອງກັນເພື່ອປົກປັກຮັກສາຄວາມປອດໄພຂອງໂຮງງານ. ພວກເຮົາໄດ້ຈັດຕັ້ງກຳລັງປະກອບອາວຸດ ປ້ອງກັນຕົວຂອງໂຮງງານຂຶ້ນ ເພື່ອເປັນເຈົ້າການໃນ

ການປົກປັກຮັກສາຄວາມປອດໄພ. ການປ້ອງກັນເວນຍາມແມ່ນໜ້າທີ່ຂອງກຳມະກອນໝົດທຸກຄົນລວມທັງນັກວິຊາວະກອນ ແລະ ຄະນະພັກໜ່ວຍ, ຄະນະອຳນວຍການກໍ່ເປັນ ແບບຢ່າງເວນຍາມ. ໂດຍປະຕິບັດທິດທາງ ປ້ອງກັນຊາດ ປ້ອງກັນຄວາມສະຫງົບແບບປວງຊົນນັ້ນ ພວກເຮົາໄດ້ປະສານສົມທົບຢ່າງ ແໜ້ນແຟ້ນກັບກຳລັງທະຫານຫລວງ, ທະຫານທ້ອງຖິ່ນ, ກອງຫລອນຕະຫລອດເຖິງປະຊາຊົນ ຢູ່ອ້ອມຂ້າງເຂື່ອນ ເພື່ອພ້ອມກັນເຮັດໜ້າທີ່ປົກປັກຮັກສາຄວາມປອດໄພ ແລະຮັບປະກັນ ໄດ້ຄວາມປອດໄພ 100% ຕະຫລອດມາ.

ຜ່ານການປະຕິບັດວຽກງານຂອງຕົນຢ່າງຕັ້ງໜ້າໃນ 10 ປີກວ່າ ພວກຂ້າພະເຈົ້າສາມາດສ້າງຜົນງານໄດ້ເບື້ອງຕົ້ນດັ່ງນີ້:

- ຜະລິດພະລັງໄຟຟ້າໄດ້ 6,98 ຕື້ ກິໂລວັດ/ໂມງ, ລາຍຮັບທຸລະກິດໄດ້ 138,7 ລ້ານໂດລາ.

ດ້ວຍຜົນງານດັ່ງກ່າວລວມໝູ່ຂອງ ພວກຂ້າພະເຈົ້າເປັນກຽດໄດ້ຮັບຫລຽນໄຊ ອິດສະລະຊັ້ນໜຶ່ງ.

ທີ່ກ່າວມາຂ້າງເທິງນັ້ນ ແມ່ນຈຸດດີ ແລະຜົນງານທີ່ພວກເຮົາຍາດມາໄດ້ໃນໄລຍະ ທີ່ຜ່ານມາ, ແຕ່ຄຽງຄູ່ໄປນັ້ນພວກຂ້າພະເຈົ້າກໍ່ສັງເກດເຫັນວ່າຕົນຍັງມີຈຸດອ່ອນ ແລະ ຂໍ້ຄົງຄ້າງທີ່ຈະຕ້ອງໄດ້ແກ້ໄຂເຊັ່ນ:

- ການຂະຫຍາຍພັກຍັງຊັກຊ້າ, ໃນຖັນແຖວພະນັກງານ, ກຳມະກອນຍັງຮັກສາແນວຄິດຄັບແຄບຜູ້ຜະລິດນ້ອຍໄວ້ຢູ່ເຊິ່ງແກ້ໄຂບໍ່ທັນຕົກເທື່ອ .

- ແບບແຜນວິທີເຮັດວຽກຕາມຮ່ອງຮອຍເກົ່າ, ອາດຍາສິດກໍ່ຍັງເສດເຫລືອຢູ່, ການຫັນໄປສູ່ກົນໄກໃໝ່ກໍ່ຍັງບໍ່ທັນແຂງແຮງເທື່ອ.

- ເຖິງວ່າ ໄດ້ພະຍາຍາມຍົກ ລະດັບຄວາມຮູ້ ຄວາມສາມາດໃຫ້ກຳມະກອນກໍ່ຕາມ ແຕ່ຖ້າທຽບໃສ່ຄວາມຮຽກຮ້ອງຕ້ອງການແມ່ນຍັງບໍ່ທັນພຽງພໍ ຄວາມຮັບຮູ້ທາງດ້ານ ການເມືອງຂອງພະນັກງານ ແລະກຳມະກອນບໍ່ທັນສະໝ່ຳສະເໝີ.

ຮຽນ ບັນດາສະຫາຍ,

ຜ່ານການເອົາໃຈໃສ່ຟັງບົດ ລາຍງານການເມືອງຂອງຄະນະບໍລິຫານງານສູນ ກາງພັກທີ່ນຳສະເໜີໂດຍສະຫາຍ ເລຂາທິການໃຫຍ່ ໄກສອນ ພົມວິຫານ ທີ່ເຄົາລົບຮັກນັ້ນ, ຂ້າພະເຈົ້າມີຄວາມທະນຶງໃຈທີ່ເຫັນໄດ້ຄວາມເອົາໃຈໃສ່, ຄວາມຫ່ວງໃຍຂອງພັກທີ່ ຢາກໃຫ້ຊົນຊັ້ນກຳມະກອນລາວທີ່ໜຸ່ມນ້ອຍກ້າວຂຶ້ນດ້ວຍທ່ວງທ່າອັນໃໝ່, ຂ້າພະເຈົ້າຂໍ ຕາງໜ້າໃຫ້ຊາວກຳມະກອນໃນໂຮງງານ ຜະລິດໄຟຟ້ານ້ຳງື່ມປະຕິຍານຕໍ່ກອງປະຊຸມໃຫຍ່ວ່າ: ຈະເຮັດທຸກສິ່ງທຸກຢ່າງ ເພື່ອປະຕິບັດຕາມຄຳສັ່ງຂອງພັກ, ຈະສູ້ຊົນຜ່ານຜ່າເພື່ອ ປະຕິບັດແຜນການ ການຜະລິດໄຟຟ້າໃຫ້ໄດ້ຕາມຄາດໝາຍ ຫລືລື່ນຄາດໝາຍທີ່ແຜນການແຕ່ງລັດ

ໄດ້ວາງອອກ, ຈະສືບຕໍ່ສົມທົບຢ່າງ ແໜ້ນແຟ້ນກັບບັນດາກຳລັງ ແລະປະຊາຊົນໃນທ້ອງຖິ່ນປ້ອງກັນໂຮງງານໃຫ້ປອດໄພເປັນຢ່າງ ດີ ແລະສ້າງໂຮງງານໃຫ້ເປັນປ້ອມໝັ້ນສັງຄົມນິຍົມອັນແທ້ຈິງ, ປະກອບສ່ວນເຂົ້າໃນການຂະຫຍາຍເສດຖະກິດຂອງຊາດ.

ໃນໂອກາດນີ້ ຂ້າພະເຈົ້າຂໍອວຍພອນໃຫ້ກອງປະຊຸມໃຫຍ່ຄັ້ງທີ III ຂອງພັກ ຈົ່ງບັນລຸຜົນສຳເລັດອັນສະຫງ່າງາມ.

ອວຍພອນໃຫ້ບັນດາສະຫາຍຜູ້ແທນ ຈົ່ງມີສຸຂະພາບເຂັ້ມແຂງ,

ພັກປະຊາຊົນປະຕິວັດລາວໝັ້ນຍືນ !

ຈົ່ງຈຸ້ມກຳມະກອນລາວ ໝັ້ນຍືນ !

* *

ວາລະສານ **ອະລຸນໃໝ່**

ປີທີສອງ ສະບັບທີ 4 ເດືອນ 12/1986 (9)

## ສາລະບານ

ໜ້າ

- ບົດນຳ: ທົ່ວພັກ, ທົ່ວປວງຊົນເຮົາ ຕັດສິນໃຈອອກແຮງປະຕິບັດ ມະຕິກອງປະຊຸມໃຫຍ່ ຄັ້ງທີ IV ຂອງພັກ ໃຫ້ສຳເລັດຜົນ .............. 1
- ໜູຮັກ ພູມສະຫວັນ: ທິດທາງ ແລະ ໜ້າທີ່ພັດທະນາເສດຖະກິດ-ສັງຄົມ ຂອງສາທາລະນະລັດ ປະຊາທິປະໄຕ ປະຊາຊົນລາວ ໃນແຜນການ 5 ປີ ຄັ້ງທີ II (1986-1990) .............. 12
- ສີສົມພອນ ລໍວັນໄຊ: ກ່ຽວກັບການດັດແປງ ເພີ່ມເຕີມ ກົດລະບຽບຂອງພັກ.............................. 37
- ຊົມເຊີຍຜົນສຳເລັດອັນສະຫງ່າງາມ ກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກກອມມູນິດ ຫວຽດນາມ ........................ 42
- ໜູນແກ້ວ ອໍລະບູນ: ກໍ່ສ້າງຖັນແຖວພະນັກງານ-ສະມາຊິກພັກເຂັ້ມແຂງ ເພື່ອປະຕິບັດ ບັນດາມະຕິຂອງພັກ ຢ່າງມີໄຊ .............. 52
- ຈູມມະລີ ໄຊຍະສອນ: ບົດລາຍງານຂອງກຳລັງປ້ອງກັນຊາດ-ປ້ອງກັນຄວາມສະຫງົບ ຕໍ່ກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກ.......... 63
- ສູນທອນ ເທບອາສາ: ບົດລາຍງານຂອງແຂວງຈຳປາສັກ ຕໍ່ກອງ ປະຊຸມໃຫຍ່ຄັ້ງທີ IV ຂອງພັກ........................ 70
- ສະຫວັດ ພູບູນປຸກ: ບົດລາຍງານຂອງໂຮງງານຜະລິດໄຟຟ້ານ້ຳງືມ ຕໍ່ກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກ.................. 76

ຫ້ອງການຂອງຄະນະບັນນາທິການ ປູ່ກັບສຳນັກງານຄະນະໂຄສະນາ
ອົບຮົມສູນກາງພັກທີ່ໜອງບອນ ໂທ: **7168–7478** ຕູ້ ປ.ນ **2110**.

# ບັນດາບົດທີ່ລົງພິມໃນ ວາລະສານ «ອະລຸນໃໝ່» ໃນປີ 1986

<u>ສະບັບທີ 1</u> :

- ບົດນຳ: * 31 ປີ ແຫ່ງການ ຂະຫຍາຍຕົວ ເຕີບໃຫຍ່ ຂອງພັກ ປະຊາຊົນ ປະຕິວັດ ລາວ .
  * ຄຳປາໄສ ຂອງສະຫາຍ ເລຂາທິການໃຫຍ່ ໄກສອນ ພົມວິຫານ ກ່າວຕໍ່ກອງປະຊຸມໃຫຍ່ຄັ້ງທີ XXVII ຂອງພັກກອມມູນິດແຫ່ງສະຫະພາບໂຊວຽດ .
  * ຈິດໃຈເນື້ອໃນບົດລາຍງານການເມືອງ ຂອງຄະນະກຳມະການສູນກາງພັກກອມມູນິດແຫ່ງສະຫະພາບໂຊວຽດ, ນຳສະເໜີໂດຍ ສະຫາຍ ມິຄາຍອິນ ກອກບາຈົບ, ເລຂາທິການໃຫຍ່ ຄະນະກຳມະການສູນກາງພັກ ກອມມູນິດແຫ່ງສະຫະພາບໂຊວຽດ ຕໍ່ກອງປະຊຸມໃຫຍ່ຄັ້ງທີ XXVII ຂອງພັກ ກອມມູນິດແຫ່ງສະຫະພາບໂຊວຽດ ໃນວັນທີ 25 ກຸມພາ 1986 ທີ່ມົດສະກູ .
  * ຊອກຮູ້ກ່ຽວກັບນິຕິທຳສັງຄົມນິຍົມ.
- <u>ຄົ້ນຄວ້າ</u>: ບັນດາກົດເກນຂອງການປະຕິວັດສັງຄົມນິຍົມ ແລະ ການກໍ່ສ້າງລັດທິສັງຄົມນິຍົມ.
  + ການດັດສ້າງສັງຄົມນິຍົມຕໍ່ກະສິກຳ.
  + ລົບລ້າງລະບອບກຳມະສິດທຶນນິຍົມ ແລະການກໍ່ສ້າງລະບອບກຳມະສິດລວມໝູ່ ກ່ຽວກັບບັນດາພາຫະນະພື້ນຖານຂອງການຜະລິດ.
  + ແດ່ທ່ານຜູ້ອ່ານ .

<u>ສະບັບທີ 2</u> :

- <u>ບົດນຳ</u>: ເພີ່ມທະວີການກວດກາ ການປະຕິບັດມະຕິ, ຄຳສັ່ງຂອງພັກ.
  * ໜູຮັກ ພູມສະຫວັນ: ລົບລ້າງກົນໄກຈຸ້ມຄອງການເງິນແບບບໍລິຫານ ເກື້ອກູນ, ຕັດສິນໃຈປະຕິບັດກົນໄກຈຸ້ມຄອງການເງິນແບບໄລ່ລຽງທຸລະກິດ ສັງຄົມນິຍົມ ຢ່າງຂາດຕົວ.

* ປີສາກົນ ສັນຕິພາບ ແລະ ໜ້າທີ່ອັນຮີບດ່ວນ ຂອງຍຸກສະໄໝ.

- ຄຳເຄົ້າ : ບັນດາກົດເກນຂອງການປະຕິວັດສັງຄົມນິຍົມ ແລະ ການກໍ່ສ້າງລັດທິສັງຄົມນິຍົມ:
  + ຂະຫຍາຍເສດຖະກິດແຫ່ງຊາດຢ່າງມີແຜນການ ແນໃສ່ກໍ່ສ້າງລະບອບ ສັງຄົມນິຍົມ, ລະບອບກອມມູນິດ ແລະ ຍົກລະດັບຊີວິດການເປັນຢູ່ຂອງຜູ້ອອກແຮງງານ ໃຫ້ສູງຂຶ້ນ.
  + ປະຕິບັດການຫັນເປັນອຸດສາຫະກຳສັງຄົມນິຍົມ
  * ໂຮ່ຈີມິນ: ວ່າດ້ວຍການປະສານສົມທົບລະຫວ່າງພະນັກງານເຖົ້າແກ່ກັບພະນັກງານໜຸ່ມນ້ອຍ.
  * ບົດຮຽນປະຫວັດສາດຂອງພັກ ກ.ສ.ຊ ໃນການປົກປັກຮັກສາປະເທດຊາດສັງຄົມນິຍົມ .

สะบับที 3 :

- ບົດນຳ : ກ້າວເຂົ້າສູ່ກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກ.
  * ສີສົມພອນ ລ້ວນໄຊ : ບັນດາໜ້າທີ່ສະເພາະໜ້າຂອງວຽກງານ ກໍ່ສ້າງພັກ, ພະນັກງານ.
  * ໂທລະເລກເສົ້າສະຫລົດໃຈ
  * ຄຳໄວ້ອາໄລ .
  * ໂທລະເລກຊົມເຊີຍ
  * ບົວພອນ ບຸນຍານິດ : ສືບຕໍ່ລຶບລ້າງຄວາມບໍ່ຮູ້ໜັງສືຢ່າງຂາດຕົວ, ຮີບຮ້ອນຍົກລະດັບວັດທະນະທຳໃຫ້ພະນັກງານ ຊາວໜຸ່ມ ແລະ ປະຊາຊົນບັນດາເຜົ່າໃຫ້ສູງຂຶ້ນຢ່າງບໍ່ຢຸດຢັ້ງ.
  * ໜູນແກ້ວ ອໍລະບູນ : ແລກປ່ຽນຄວາມເຫັນ ກ່ຽວກັບກົນໄກລຸ້ມຄອງເສດຖະກິດລວມສູນອາດຍາສິດ,ບໍລິຫານເກືອກຸ້ນ, ພົນຮ້າຍ ແລະ ສາຍເຫດຂອງມັນ .

- ຄຳເຄົ້າ: ກ່ຽວກັບກົດເກນຂອງການປະຕິວັດສັງຄົມນິຍົມ ແລະ ກໍ່ສ້າງສັງຄົມນິຍົມ.
  + ປະຕິບັດການປະຕິວັດສັງຄົມນິຍົມ ໃນຂົງເຂດແນວຄິດ ວັດທະນະທຳ .
  * ສົມລັດ ຈັນທະມາດ: ຊຸມປີແຫ່ງການຕໍ່ສູ້ ແລະ ໄຊຊະນະ .

* ກຳລັງໜຶ່ງ ທີ່ມີອິດທິພົນ ຂອງການເມືອງໂລກ.

**ສະບັບພິເສດ:**

- ບົດນຳ : ຄຳນັບຍິນດີຍິນດີສຳເລັດກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກຢ່າງສຸດໃຈ.
  * ກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກປະຊາຊົນປະຕິວັດລາວ :
    - ສຸນທອນພົດ ໄຂກອງປະຊຸມໃຫຍ່ຄັ້ງທີ IV ຂອງສະຫາຍ ພູມີ ວົງວິຈິດ
    - ລາຍງານການເມືອງຂອງຄະນະບໍລິຫານງານສູນກາງພັກ ສະເໜີໂດຍ ສະຫາຍ ໄກສອນ ພົມວິຫານ .
    - ລາຍຊື່ກົມການເມືອງ ແລະ ຄະນະເລຂາທິການສູນກາງພັກ ປະຊາຊົນປະຕິວັດລາວ.
    - ຮູບກົມການເມືອງ.
    - ລາຍຊື່ຄະນະບໍລິຫານງານສູນກາງພັກປະຊາຊົນປະຕິວັດລາວ.
    - ມະຕິກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກ.
    - ສຸນທອນພົດ ອັດກອງປະຊຸມໃຫຍ່ຂອງສະຫາຍ ໄກສອນ ພົມວິຫານ .
  * ຄຳປາໄສອວຍພອນ ຂອງບັນດາພັກອ້າຍນ້ອງ :
    - ຄຳປາໄສຂອງສະຫາຍ ຟາມວັນດົງ ຜູ້ແທນພັກກອມມູນິດ ຫວຽດນາມ.
    - ຄຳປາໄສຂອງສະຫາຍ ໄກດາ ອາລີເອັບ ຜູ້ແທນພັກກອມມູນິດໂຊວຽດ.
    - ຄຳປາໄສຂອງສະຫາຍ ເຮັງຊຳຣິນ ຜູ້ແທນພັກປະຊາຊົນປະຕິວັດ ກຳປູເຈຍ .

**ສະບັບທີ 4 :**

- ບົດນຳ : ທົ່ວພັກ, ທົ່ວປວງຊົນເຮົາ ຕັດສິນໃຈອອກແຮງປະຕິບັດມະຕິ ກອງປະຊຸມໃຫຍ່ຄັ້ງທີ IV ຂອງພັກໃຫ້ສຳເລັດຜົນ .
  - ໜູຮັກ ພູມສະຫວັນ: ທິດທາງ ແລະ ໜ້າທີ່ພັດທະນາເສດຖະກິດ–ສັງຄົມຂອງສາທາລະນະລັດປະຊາທິປະໄຕປະຊາຊົນລາວ ໃນແຜນການ 5 ປີຄັ້ງທີ II ( 1986–1990).
  - ສີສົມພອນ ລໍວັນໄຊ : ກ່ຽວກັບການດັດແປງ ເພີ່ມເຕີມ ກົດລະບຽບຂອງພັກ .
  - ຍິນດີຍິນດີສຳເລັດ ອັນສະຫງ່າງາມກອງປະຊຸມໃຫຍ່ຄັ້ງທີ IV ຂອງ

ພັກ ກອມມູນິດ ຫວຽດນາມ.

- ຫນູນແກ້ວ ອໍລະບູນ: ກໍ່ສ້າງຖັນແຖວພະນັກງານ-ສະມາຊິກພັກ ເຂັ້ມແຂງ ເພື່ອປະຕິບັດບັນດາມະຕິຂອງພັກ ຢ່າງມີໄຊ .
- ຈູມມະລີ ໄຊຍະສອນ: ບົດລາຍງານຂອງກຳລັງປ້ອງກັນຊາດ - ປ້ອງກັນຄວາມສະຫງົບ ຕໍ່ກອງປະຊຸມໃຫຍ່ຄັ້ງທີ III ຂອງພັກ .
- ສູນທອນ ເທບອາສາ: ບົດລາຍງານຂອງແຂວງຈຳປາສັກ ຕໍ່ກອງ ປະຊຸມໃຫຍ່ຄັ້ງທີ III ຂອງພັກ.
- ສະຫວັດ ພູບູນປຸກ: ບົດລາຍງານຂອງໂຮງງານຜະລິດໄຟຟ້ານ້ຳງືມ ຕໍ່ກອງປະຊຸມໃຫຍ່ຄັ້ງທີ III ຂອງພັກ.

